[໕໐໔] ສະພາວະທຳເຫຼົ່າໃດວິບປະຍຸດຈາກສະພາວະທຳທີ່ເປັນອາລົມຂອງປະຣາມາດ ສະພາວະທຳທີ່ວິບປະຍຸດຈາກປະຣາມາດ ສະພາວະທຳທີ່ເປັນອາລົມຂອງປະຣາມາດ ແຕ່ບໍ່ເປັນປະຣາມາດ ສະພາວະທຳທີ່ວິບປະຍຸດຈາກປະຣາມາດແຕ່ເປັນອາລົມຂອງປະຣາມາດ

ສະພາວະທຳເຫຼົ່ານັ້ນ ສົງເຄາະເຂົ້າໄດ້ກັບຂັນ ໔ ອາຍະຕະນະ ໔ ແລະທາດ ໔

ສົງເຄາະເຂົ້າບໍ່ໄດ້ກັບຂັນ ອາຍະຕະນະ ແລະທາດເທົ່າໃດ?

ສົງເຄາະເຂົ້າບໍ່ໄດ້ກັບຂັນ ໑ ອາຍະຕະນະ ໑໐ ແລະທາດ ໑໖

[໕໐໖] ສະພາວະທຳເຫຼົ່າໃດ ວິບປະຍຸດຈາກສະພາວະທຳທີ່ບໍ່ເປັນອາລົມຂອງປະຣາມາດ ສະພາວະທຳທີ່ວິບປະຍຸດຈາກປະຣາມາດ ແລະບໍ່ເປັນອາລົມຂອງປະຣາມາດ ສະພາວະທຳເຫຼົ່ານັ້ນສົງເຄາະເຂົ້າໄດ້ກັບຂັນ ໔ ອາຍະຕະນະ ໔ ແລະທາດ ໗

ສົງເຄາະເຂົ້າບໍ່ໄດ້ກັບຂັນ ອາຍະຕະນະ ແລະທາດເທົ່າໃດ?

ສົງເຄາະເຂົ້າບໍ່ໄດ້ກັບຂັນ ໑ ອາຍະຕະນະ ໑໐ ແລະທາດ ໑໐

[໕໐໔] ສະພາວະທຳເຫຼົ່າໃດວິບປະຍຸດຈາກສະພາວະທຳທີ່ຮັບຮູ້ອາລົມໄດ້ ສະພາວະທຳທີ່ເປັນຈິດ ສະພາວະທຳທີ່ເປັນເຈຕະສິກ ສະພາວະທຳທີ່ສຳປະຍຸດດ້ວຍຈິດ ສະພາວະທຳທີ່ປະປົນກັບຈິດ ສະພາວະທຳທີ່ປະປົນກັບຈິດແລະມີຈິດເປັນສະມຸດຖານ ສະພາວະທຳທີ່ປະປົນກັບຈິດມີຈິດເປັນສະມຸດຖານແລະເກີດພ້ອມກັບຈິດ ສະພາວະທຳທີ່ປະປົນກັບຈິດມີຈິດເປັນສະມຸດຖານແລະເປັນໄປຕາມຈິດ ສະພາວະທຳເຫຼົ່ານັ້ນ ເວັ້ນທາດທີ່ບໍ່ຖືກປັດໄຈປຸງແຕ່ງອອກຈາກຂັນແລ້ວ ສົງເຄາະເຂົ້າໄດ້ກັບຂັນ ໑ ອາຍະຕະນະ ໑໑ ແລະທາດ ໑໑

ສົງເຄາະເຂົ້າບໍ່ໄດ້ກັບຂັນ ອາຍະຕະນະ ແລະທາດເທົ່າໃດ?

ສົງເຄາະເຂົ້າບໍ່ໄດ້ກັບຂັນ ໔ ອາຍະຕະນະ ໑ ແລະທາດ ໗

[໕໐໕] ສະພາວະທຳເຫຼົ່າໃດວິບປະຍຸດຈາກສະພາວະທຳທີ່ຮັບຮູ້ອາລົມບໍ່ໄດ້ ສະພາວະທຳທີ່ວິບປະຍຸດຈາກຈິດ ສະພາວະທຳທີ່ປະປົນກັບຈິດ ສະພາວະທຳທີ່ເປັນອຸປາທາຍະຮູບສະພາວະທຳທີ່ກຳອັນປະກອບດ້ວຍຕັນຫາແລະທິດຖິບໍ່ຍຶດຖື ສະພາວະທຳເຫຼົ່ານັ້ນສົງເຄາະເຂົ້າໄດ້ກັບຂັນ ໔ ອາຍະຕະນະ ໔ ແລະທາດ ໗

ສົງເຄາະເຂົ້າບໍ່ໄດ້ກັບຂັນ ອາຍະຕະນະ ແລະທາດເທົ່າໃດ?

ສົງເຄາະເຂົ້າບໍ່ໄດ້ກັບຂັນ ໑ ອາຍະຕະນະ ໑໐ ແລະທາດ ໑໐

[໕໐໖] ສະພາວະທຳເຫຼົ່າໃດວິບປະຍຸດຈາກສະພາວະທຳທີ່ກຳອັນປະກອບດ້ວຍຕັນຫາ ແລະທິດຖິຍຶດຖື ສະພາວະທຳເຫຼົ່ານັ້ນສົງເຄາະເຂົ້າໄດ້ກັບຂັນ ໔ ອາຍະຕະນະ ໔ ແລະທາດ ໓
ສົງເຄາະເຂົ້າບໍ່ໄດ້ກັບຂັນ ອາຍະຕະນະ ແລະທາດເທົ່າໃດ?
ສົງເຄາະເຂົ້າບໍ່ໄດ້ກັບຂັນ ໑ ອາຍະຕະນະ ໑໐ ແລະທາດ ໑໕

[໕໐໗] ສະພາວະທຳເຫຼົ່າໃດວິບປະຍຸດຈາກສະພາວະທຳທີ່ເປັນອຸປາທານ ສະພາວະທຳທີ່ເປັນກິເລດ ສະພາວະທຳທີ່ກິເລດເຮັດໃຫ້ເສົ້າໝອງ ສະພາວະທຳທີ່ສຳປະຍຸດດ້ວຍກິເລດ ສະພາວະທຳທີ່ເປັນກິເລດແລະເປັນອາລົມຂອງກິເລດ ສະພາວະທຳ ທີ່ເປັນກິເລດແລະກິເລດເຮັດໃຫ້ເສົ້າໝອງ ສະພາວະທຳທີ່ກິເລດເຮັດໃຫ້ເສົ້າໝອງແຕ່ບໍ່ເປັນກິເລດ ສະພາວະທຳທີ່ເປັນກິເລດແລະສຳປະຍຸດດ້ວຍກິເລດ ສະພາວະທຳທີ່ສຳປະຍຸດດ້ວຍກິເລດແຕ່ບໍ່ເປັນກິເລດ
ສະພາວະທຳເຫຼົ່ານັ້ນ ເວັ້ນທາດທີ່ບໍ່ຖືກປັດໄຈປຸງແຕ່ງອອກຈາກຂັນແລ້ວ ສົງເຄາະເຂົ້າໄດ້ກັບຂັນ ໕ ອາຍະຕະນະ ໑໔ ແລະທາດ ໑໗
ສົງເຄາະເຂົ້າບໍ່ໄດ້ກັບຂັນ ອາຍະຕະນະ ແລະທາດເທົ່າໃດ?
ບໍ່ມີຂັນ ອາຍະຕະນະ ແລະທາດເຫຼົ່າໃດທີ່ຈະສົງເຄາະເຂົ້າບໍ່ໄດ້

[໕໐໘] ສະພາວະທຳເຫຼົ່າໃດວິບປະຍຸດຈາກສະພາວະທຳທີ່ເປັນອາລົມຂອງກິເລດ ສະພາວະທຳທີ່ກິເລດບໍ່ເຮັດໃຫ້ເສົ້າໝອງ ສະພາວະທຳທີ່ວິບປະຍຸດຈາກກິເລດ ສະພາວະທຳທີ່ເປັນອາລົມຂອງກິເລດແຕ່ບໍ່ເປັນກິເລດ ສະພາວະທຳທີ່ວິບປະຍຸດຈາກກິເລດແຕ່ເປັນອາລົມຂອງກິເລດ
ສະພາວະທຳເຫຼົ່ານັ້ນ ສົງເຄາະເຂົ້າໄດ້ກັບຂັນ ໔ ອາຍະຕະນະ ໔ ແລະທາດ ໔
ສົງເຄາະເຂົ້າບໍ່ໄດ້ກັບຂັນ ອາຍະຕະນະ ແລະທາດເທົ່າໃດ?
ສົງເຄາະເຂົ້າບໍ່ໄດ້ກັບຂັນ ໑ ອາຍະຕະນະ ໑໐ ແລະທາດ ໑໖

[໕໐໙] ສະພາວະທຳເຫຼົ່າໃດ ວິບປະຍຸດຈາກສະພາວະທຳທີ່ບໍ່ເປັນອາລົມຂອງກິເລດ ສະພາວະທຳທີ່ວິບປະຍຸດຈາກກິເລດ ແລະບໍ່ເປັນອາລົມຂອງກິເລດ
ສະພາວະທຳເຫຼົ່ານັ້ນ ສົງເຄາະເຂົ້າໄດ້ກັບຂັນ ໔ ອາຍະຕະນະ ໔ ແລະທາດ ໗
ສົງເຄາະເຂົ້າບໍ່ໄດ້ກັບຂັນ ອາຍະຕະນະ ແລະທາດເທົ່າໃດ?
ສົງເຄາະເຂົ້າບໍ່ໄດ້ກັບຂັນ ໑ ອາຍະຕະນະ ໑໐ ແລະທາດ ໑໐

[໕໑໐] ສະພາວະທຳເຫຼົ່າໃດວິບປະຍຸດຈາກສະພາວະທຳທີ່ຕ້ອງປະຫານດ້ວຍໂສດາປັດຕິມັກ ສະພາວະທຳທີ່ຕ້ອງປະຫານດ້ວຍມັກເບື້ອງເທິງ ໓ ສະພາວະທຳ ທີ່ມີເຫດ

ຕ້ອງປະຫານດ້ວຍໂສດາປັດຕິມັກ ສະພາວະທຳທີ່ມີເຫດຕ້ອງປະຫານດ້ວຍມັກເບື້ອງເທິງ ໓
ສະພາວະທຳເຫຼົ່ານັ້ນ ເວັ້ນທາດທີ່ບໍ່ຖືກປັດໄຈປຸງແຕ່ງອອກຈາກຂັນແລ້ວ ສົງເຄາະເຂົ້າໄດ້ກັບຂັນ ໕ ອາຍະຕະນະ ໑໒ ແລະທາດ ໑໗
ສົງເຄາະເຂົ້າບໍ່ໄດ້ກັບຂັນ ອາຍະຕະນະ ແລະທາດເທົ່າໃດ?
ບໍ່ມີຂັນ ອາຍະຕະນະ ແລະທາດເຫຼົ່າໃດທີ່ຈະສົງເຄາະເຂົ້າບໍ່ໄດ້

[໕໑໑] ສະພາວະທຳເຫຼົ່າໃດວິບປະຍຸດຈາກສະພາວະທຳທີ່ບໍ່ຕ້ອງປະຫານດ້ວຍໂສດາປັດຕິມັກ ສະພາວະທຳທີ່ບໍ່ຕ້ອງປະຫານດ້ວຍມັກເບື້ອງເທິງ ໓ ສະພາວະທຳທີ່ມີເຫດບໍ່ຕ້ອງປະຫານດ້ວຍໂສດາປັດຕິມັກ ສະພາວະທຳທີ່ມີເຫດບໍ່ຕ້ອງປະຫານດ້ວຍມັກເບື້ອງເທິງ ໓
ສະພາວະທຳເຫຼົ່ານັ້ນ ສົງເຄາະເຂົ້າໄດ້ກັບຂັນ ໔ ອາຍະຕະນະ ໒ ແລະທາດ ໒
ສົງເຄາະເຂົ້າບໍ່ໄດ້ກັບຂັນ ອາຍະຕະນະ ແລະທາດເທົ່າໃດ?
ສົງເຄາະເຂົ້າບໍ່ໄດ້ກັບຂັນ ໑ ອາຍະຕະນະ ໑໐ ແລະທາດ ໑໖

[໕໑໒] ສະພາວະທຳເຫຼົ່າໃດວິບປະຍຸດຈາກສະພາວະທຳທີ່ມີວິຕົກ ສະພາວະທຳທີ່ມີວິຈານສະພາວະທຳເຫຼົ່ານັ້ນ ເວັ້ນທາດທີ່ບໍ່ຖືກປັດໄຈປຸງແຕ່ງອອກຈາກຂັນ ແ ລ້ ວ ສົງເຄາະເຂົ້າໄດ້ກັບຂັນ ໕ ອາຍະຕະນະ ໑໒ ແລະທາດ ໑໗
ສົງເຄາະເຂົ້າບໍ່ໄດ້ກັບຂັນ ອາຍະຕະນະ ແລະທາດເທົ່າໃດ?
ບໍ່ມີຂັນແລະອາຍະຕະນະເຫຼົ່າໃດທີ່ຈະສົງເຄາະເຂົ້າບໍ່ໄດ້ ແຕ່ສົງເຄາະເຂົ້າບໍ່ໄດ້ກັບທາດ ໑

[໕໑໓] ສະພາວະທຳເຫຼົ່າໃດວິບປະຍຸດຈາກສະພາວະທຳທີ່ມີປີຕິ ສະພາວະທຳທີ່ປະກອບດ້ວຍປີຕິ ສະພາວະທຳທີ່ປະກອບດ້ວຍສຸກ
ສະພາວະທຳເຫຼົ່ານັ້ນ ເວັ້ນທາດທີ່ບໍ່ຖືກປັດໄຈປຸງແຕ່ງອອກຈາກຂັນແລ້ວ ສົງເຄາະເຂົ້າໄດ້ກັບຂັນ ໕ ອາຍະຕະນະ ໑໒ ແລະທາດ ໑໗
ສົງເຄາະເຂົ້າບໍ່ໄດ້ກັບຂັນ ອາຍະຕະນະ ແລະທາດເທົ່າໃດ?
ບໍ່ມີຂັນ ອາຍະຕະນະ ແລະທາດເຫຼົ່າໃດທີ່ຈະສົງເຄາະເຂົ້າບໍ່ໄດ້

[໕໑໔] ສະພາວະທຳເຫຼົ່າໃດວິບປະຍຸດຈາກສະພາວະທຳທີ່ປະກອບດ້ວຍອຸເປກຂາສະພາວະທຳເຫຼົ່ານັ້ນ ເວັ້ນທາດທີ່ບໍ່ຖືກປັດໄຈປຸງແຕ່ງອອກຈາກຂັນແລ້ວ ສົງເຄາະເຂົ້າໄດ້ກັບຂັນ ໕ ອາຍະຕະນະ ໑໒ ແລະທາດ ໑໓
ສົງເຄາະເຂົ້າບໍ່ໄດ້ກັບຂັນ ອາຍະຕະນະ ແລະທາດເທົ່າໃດ?

ບໍ່ມີຂັນແລະອາຍະຕະນະເຫຼົ່າໃດທີ່ຈະສົງເຄາະເຂົ້າບໍ່ໄດ້ ແຕ່ສົງເຄາະເຂົ້າບໍ່ໄດ້ກັບທາດ ໕

[໕໑໕] ສະພາວະທຳເຫຼົ່າໃດ ວິບປະຍຸດຈາກສະພາວະທຳ ທີ່ເປັນກາມາວະຈອນ ສະພາວະທຳທີ່ນັບເນື່ອງໃນວັດຕະທຸກ ສະພາວະທຳທີ່ມີທຳອື່ນຍິ່ງກວ່າ ສະພາວະທຳເຫຼົ່ານັ້ນ ສົງເຄາະເຂົ້າໄດ້ກັບຂັນ ໔ ອາຍະຕະນະ ໘ ແລະທາດ ໘
ສົງເຄາະເຂົ້າບໍ່ໄດ້ກັບຂັນ ອາຍະຕະນະ ແລະທາດເທົ່າໃດ?
ສົງເຄາະເຂົ້າບໍ່ໄດ້ກັບຂັນ ໑ ອາຍະຕະນະ ໑໐ ແລະທາດ ໑໖

[໕໑໖] ສະພາວະທຳເຫຼົ່າໃດວິບປະຍຸດຈາກສະພາວະທຳທີ່ບໍ່ເປັນກາມາວະຈອນ ສະພາວະທຳທີ່ບໍ່ນັບເນື່ອງໃນວັດຕະທຸກ ສະພາວະທຳທີ່ບໍ່ມີທຳອື່ນຍິ່ງກວ່າ ສະພາວະທຳເຫຼົ່ານັ້ນ ສົງເຄາະເຂົ້າໄດ້ກັບຂັນ ໔ ອາຍະຕະນະ ໘ ແລະທາດ ໗
ສົງເຄາະເຂົ້າບໍ່ໄດ້ກັບຂັນ ອາຍະຕະນະ ແລະທາດເທົ່າໃດ?
ສົງເຄາະເຂົ້າບໍ່ໄດ້ກັບຂັນ ໑ ອາຍະຕະນະ ໑໐ ແລະທາດ ໑໐

[໕໑໗] ສະພາວະທຳເຫຼົ່າໃດວິບປະຍຸດຈາກສະພາວະທຳທີ່ເປັນຮູບປາວະຈອນ ສະພາວະທຳທີ່ເປັນອະຮູບປາວະຈອນ ສະພາວະທຳທີ່ເປັນເຫດນຳອອກຈາກວັດຕະທຸກ ສະພາວະທຳທີ່ໃຫ້ຜົນແນ່ນອນ ສະພາວະທຳທີ່ເປັນເຫດໃຫ້ສັດຮ້ອງໄຫ້
ສະພາວະທຳເຫຼົ່ານັ້ນ ເວັ້ນທາດທີ່ບໍ່ຖືກປັດໄຈປຸງແຕ່ງອອກຈາກຂັນແລ້ວ ສົງເຄາະເຂົ້າໄດ້ກັບຂັນ ໕ ອາຍະຕະນະ ໑໘ ແລະທາດ ໑໗
ສົງເຄາະເຂົ້າບໍ່ໄດ້ກັບຂັນ ອາຍະຕະນະ ແລະທາດເທົ່າໃດ?
ບໍ່ມີຂັນ ອາຍະຕະນະ ແລະທາດເຫຼົ່າໃດທີ່ຈະສົງເຄາະເຂົ້າບໍ່ໄດ້

[໕໑໗] ສະພາວະທຳເຫຼົ່າໃດ ວິບປະຍຸດຈາກສະພາວະທຳ ທີ່ບໍ່ເປັນຮູບປາວະຈອນ ສະພາວະທຳທີ່ບໍ່ເປັນອະຮູບປາວະຈອນ ສະພາວະທຳທີ່ບໍ່ເປັນເຫດນຳອອກຈາກວັດຕະທຸກ ສະພາວະທຳທີ່ໃຫ້ຜົນບໍ່ແນ່ນອນ ສະພາວະທຳທີ່ບໍ່ເປັນເຫດໃຫ້ສັດຮ້ອງໄຫ້
ສະພາວະທຳເຫຼົ່ານັ້ນສົງເຄາະເຂົ້າໄດ້ກັບຂັນ ອາຍະຕະນະ ແລະທາດເທົ່າໃດ?
ສະພາວະທຳເຫຼົ່ານັ້ນ ສົງເຄາະເຂົ້າໄດ້ກັບຂັນ ໔ ອາຍະຕະນະ ໘ ແລະທາດ ໘
ສົງເຄາະເຂົ້າບໍ່ໄດ້ກັບຂັນ ອາຍະຕະນະ ແລະທາດເທົ່າໃດ?
ສົງເຄາະເຂົ້າບໍ່ໄດ້ກັບຂັນ ໑ ອາຍະຕະນະ ໑໐ ແລະທາດ ໑໖

## ລວມບົດທຳທີ່ບໍ່ໄດ້ໃນຈຸດທະສະມະໄນ ໕໗ ບົດ

ທຳມາຍະຕະນະ ໑ ທຳມະທາດ ໑
ຊີວິຕິນຊີ ໑ ນາມຮູບ ໑ ສະລາຍະຕະນະ ໑
ຊາດ ໑ ຊະຣາ ໑ ມໍຣະນະ ໑ ທຳ ໘ ບົດ
ຈາກຕິກະ (ອັດຊັດຕະພະທິດທະແລະອະນິທັດສະນະອັບປະຕິຄະ)
ໃນຈູລັນຕະຣະທຸກະທຳອິດ ໗ ບົດ
ໃນໂຄດສະກະ ໑໐ ບົດ ໃນມະຫັນຕະຣະທຸກະຖັດມາ ໑໔ ບົດ
ໃນປິດຖິທຸກະສຸດທ້າຍ ໖ ບົດ ສະພາວະທຳ ໕໗ ປະການເຫຼົ່ານີ້
ຍ່ອມບໍ່ໄດ້ໃນສະມຸດເສທະໄນ (ຈຸດທະສະມະໄນ)
ແລະໃນ (ອັດຖະມະໄນທີ່ຊື່ວ່າ) ໂມຄະປຸດສະກະ

**ວິບປະຍຸດເຕນະສັງຄະຫິຕາສັງຄະຫິຕະປະທະນິດເທດທີ ໑໔ ຈົບ**

**ປະກອນທີ່ຊື່ວ່າທາຕຸກະຖາ ຈົບບໍລິບູນ.**

# ພຣະອະພິທຳປິດົກ

# ປຸກຄະລະບັນຍັດ

**ຂໍນ້ອບນອມແດ່ ພຣະຜູ້ມີພຣະພາກ ອະຣະຫັນຕະ ສຳມາສຳພຸດທະເຈົ້າ ພຣະອົງນັ້ນ**

# ມາຕິກາ

## ໑. ເອກກະອຸດເທດ

## ໝວດວ່າດ້ວຍບຸກຄົນ ໑ ຈຳພວກ

[໑] ບັນຍັດ ໖ ປະການ ຄື

໑. ຂັນທະບັນຍັດ
໒. ອາຍະຕະນະບັນຍັດ
໓. ທາດບັນຍັດ
໔. ສັດຈະບັນຍັດ
໕. ອິນທະຣິຍະບັນຍັດ
໖. ປຸກຄະລະບັນຍັດ

## ໑. ຂັນທະບັນຍັດ

[໒] ການບັນຍັດສະພາວະທຳທີ່ເປັນໝວດໝູ່ກັນວ່າເປັນຂັນ ມີເທົ່າໃດ?
ຂັນທະບັນຍັດມີ ໕ ຄື

໑. ຮູບປະຂັນ
໒. ເວທະນາຂັນ
໓. ສັນຍາຂັນ
໔. ສັງຂານຂັນ
໕. ວິນຍານຂັນ

ການບັນຍັດສະພາວະທຳທີ່ເປັນໝວດໝູ່ກັນວ່າເປັນຂັນມີເທົ່ານີ້

## ໒. ອາຍະຕະນະບັນຍັດ

[໓] ການບັນຍັດສະພາວະທຳທີ່ເປັນບໍ່ເກີດວ່າເປັນອາຍະຕະນະ ມີເທົ່າໃດ?
ອາຍະຕະນະບັນຍັດມີ ໑໒ ຄື

| | |
|---|---|
| ໑. ຈັກຂາຍະຕະນະ | ໒. ຣູປາຍະຕະນະ |
| ໓. ໂສຕາຍະຕະນະ | ໔. ສັດທາຍະຕະນະ |
| ໕. ຄານາຍະຕະນະ | ໖. ຄັນທາຍະຕະນະ |
| ໗. ຊິວຫາຍະຕະນະ | ໘. ຣະສາຍະຕະນະ |
| ໙. ກາຍາຍະຕະນະ | ໑໐. ໂຜດຖັບພາຍະຕະນະ |
| ໑໑. ມະນາຍະຕະນະ | ໑໒. ທຳມາຍະຕະນະ |

ການບັນຍັດສະພາວະທຳທີ່ເປັນບໍ່ເກີດວ່າເປັນອາຍະຕະນະມີເທົ່ານີ້

## ໓. ທາດບັນຍັດ

[໔] ການບັນຍັດສະພາວະທຳທີ່ຊົງຕົວຢູ່ວ່າເປັນທາດ ມີເທົ່າໃດ?
ທາດບັນຍັດມີ ໑໘ ຄື

| | |
|---|---|
| ໑. ຈັກຂຸທາດ | ໒. ຣູປະທາດ |
| ໓. ຈັກຂຸວິນຍານະທາດ | ໔. ໂສຕະທາດ |
| ໕. ສັດທະທາດ | ໖. ໂສຕະວິນຍານະທາດ |
| ໗. ຄານະທາດ | ໘. ຄັນທະທາດ |
| ໙. ຄານະວິນຍານະທາດ | ໑໐. ຊິວຫາທາດ |
| ໑໑. ຣະສະທາດ | ໑໒. ຊິວຫາວິນຍານະທາດ |
| ໑໓. ກາຍະທາດ | ໑໔. ໂຜດຖັບພະທາດ |
| ໑໕. ກາຍະວິນຍານະທາດ | ໑໖. ມະໂນທາດ |
| ໑໗. ທຳມະທາດ | ໑໘. ມະໂນວິນຍານະທາດ |

ການບັນຍັດສະພາວະທຳທີ່ຊົງຕົວຢູ່ວ່າເປັນທາດມີເທົ່ານີ້

## ໔. ສັດຈະບັນຍັດ

[໕] ການບັນຍັດສະພາວະທຳທີ່ເປັນຄວາມຈິງວ່າເປັນສັດຈະ ມີເທົ່າໃດ?
ສັດຈະບັນຍັດມີ ໔ ຄື

| | |
|---|---|
| ໑. ທຸກຂະສັດຈະ | ໒. ສະມຸທະຍະສັດຈະ |
| ໓. ນິໂຣທະສັດຈະ | ໔. ມັກຄະສັດຈະ |

ການບັນຍັດສະພາວະທຳທີ່ເປັນຄວາມຈິງວ່າເປັນສັດຈະມີເທົ່ານີ້

## ໕. ອິນທະຣິຍະບັນຍັດ

[໖] ການບັນຍັດສະພາວະທຳທີ່ເປັນໃຫຍ່ວ່າເປັນອິນຊີ ມີເທົ່າໃດ?
ອິນທະຣິຍະບັນຍັດມີ ໒໒ ຄື

| | |
|---|---|
| ໑. ຈັກຂຸນຊີ | ໒. ໂສຕິນຊີ |
| ໓. ຄານິນຊີ | ໔. ຊິວຫິນຊີ |
| ໕. ກາຍິນຊີ | ໖. ມະນິນຊີ |
| ໗. ອິດຖິນຊີ | ໘. ປຸຣິສິນຊີ |
| ໙. ຊີວິຕິນຊີ | ໑໐. ສຸຂິນຊີ |
| ໑໑. ທຸກຂິນຊີ | ໑໒. ໂສມະນັດສິນຊີ |
| ໑໓. ໂທມະນັດສິນຊີ | ໑໔. ອຸເປກຂິນຊີ |
| ໑໕. ສັດທິນຊີ | ໑໖. ວິຣິຍິນຊີ |
| ໑໗. ສະຕິນຊີ | ໑໘. ສະມາທິນຊີ |
| ໑໙. ປັນຍິນຊີ | ໒໐. ອະນັນຍາຕັນຍັດສາມີຕິນຊີ |
| ໒໑. ອັນຍິນຊີ | ໒໒. ອັນຍາຕາວິນຊີ |

ການບັນຍັດສະພາວະທຳທີ່ເປັນໃຫຍ່ວ່າເປັນອິນຊີມີເທົ່ານີ້

## ໖. ປຸກຄະລະບັນຍັດ

[໗] ການບັນຍັດບຸກຄົນວ່າເປັນບຸກຄົນ ມີເທົ່າໃດ?
ບຸກຄົນ ໑ ຈຳພວກ ຄື

| | | |
|---|---|---|
| ໑. ບຸກຄົນຜູ້ເປັນ | ສະມະຍະວິມຸດຕະ | (໑) |
| ໒. ບຸກຄົນຜູ້ເປັນ | ອະສະມະຍະວິມຸດຕະ | (໒) |
| ໓. ບຸກຄົນຜູ້ເປັນ | ກຸບປະທຳ | (໓) |
| ໔. ບຸກຄົນຜູ້ເປັນ | ອະກຸບປະທຳ | (໔) |
| ໕. ບຸກຄົນຜູ້ເປັນ | ປະຣິຫານະທຳ | (໕) |
| ໖. ບຸກຄົນຜູ້ເປັນ | ອະປະຣິຫານະທຳ | (໖) |
| ໗. ບຸກຄົນຜູ້ເປັນ | ເຈຕະນາພັບພະ | (໗) |
| ໘. ບຸກຄົນຜູ້ເປັນ | ອະນຸຣັກຂະນາພັບພະ | (໘) |
| ໙. ບຸກຄົນຜູ້ເປັນ | ປຸຖຸຊົນ | (໙) |
| ໑໐. ບຸກຄົນຜູ້ເປັນ | ໂຄຕະຣະພູ | (໑໐) |

໔໒. ບຸກຄົນຜູ້ເປັນ ອັນຕະຣາປະຣິນິບພາຍີ (໓໖)
໔໓. ບຸກຄົນຜູ້ເປັນ ອຸປະຫັດຈະປະຣິນິບພາຍີ (໓໗)
໔໔. ບຸກຄົນຜູ້ເປັນ ອະສັງຂາຣະປະຣິນິບພາຍີ (໓໘)
໔໕. ບຸກຄົນຜູ້ເປັນ ສະສັງຂາຣະປະຣິນິບພາຍີ (໓໙)
໔໖. ບຸກຄົນຜູ້ເປັນ ອຸດທັງໂສໂຕອະກະນິດຖະຄາມີ (໔໐)
໔໗. ບຸກຄົນຜູ້ເປັນ ໂສດາບັນ (໔໑)
໔໘. ບຸກຄົນຜູ້ປະຕິບັດເພື່ອເຮັດໃຫ້ແຈ້ງໂສດາປັດຕິຜົນ (໔໑)
໔໙. ບຸກຄົນຜູ້ເປັນ ສະກະທາຄາມີ (໔໒)
໕໐. ບຸກຄົນຜູ້ປະຕິບັດເພື່ອເຮັດໃຫ້ແຈ້ງສະກະທາຄາມີຜົນ (໔໒)
໕໑. ບຸກຄົນຜູ້ເປັນ ອະນາຄາມີ (໔໓)
໕໒. ບຸກຄົນຜູ້ປະຕິບັດເພື່ອເຮັດໃຫ້ແຈ້ງອະນາຄາມີຜົນ (໔໓)
໕໓. ບຸກຄົນຜູ້ເປັນ ອະຣະຫັນ (໔໔)
໕໔. ບຸກຄົນຜູ້ປະຕິບັດເພື່ອເຮັດໃຫ້ແຈ້ງອະຣະຫັດຕະຜົນ (໔໔)

**ເອກກະອຸດເທດ ຈົບ**

# ໒. ທຸກະອຸດເທດ

## ໝວດວ່າດ້ວຍບຸກຄົນ ໒ ຈຳພວກ

[໘] ບຸກຄົນ ໒ ຈຳພວກ ຄື

໑. ບຸກຄົນຜູ້ມັກໂກດ ບຸກຄົນຜູ້ຜູກໂກດ (໔໕-໔໖)
໒. ບຸກຄົນຜູ້ມັກລົບຫຼູ່ ບຸກຄົນຜູ້ຕີສະເໝີ (໔໗-໔໘)
໓. ບຸກຄົນຜູ້ມີຄວາມຣິດສະຫຍາ ບຸກຄົນຜູ້ມີຄວາມຂີ້ຖີ່ (໔໙-໕໐)
໔. ບຸກຄົນຜູ້ໂອ້ອວດ ບຸກຄົນຜູ້ມີມາຍາ (໕໑-໕໒)
໕. ບຸກຄົນຜູ້ບໍ່ມີຫິຣິ ບຸກຄົນຜູ້ບໍ່ມີໂອດຕັບປະ (໕໓-໕໔)
໖. ບຸກຄົນຜູ້ວ່າຍາກ ບຸກຄົນຜູ້ມີມິດຊົ່ວ (໕໕-໕໖)
໗. ບຸກຄົນຜູ້ບໍ່ຄຸ້ມຄອງທະວານໃນອິນຊີ ບຸກຄົນຜູ້ບໍ່ຮູ້ຈັກປະມານໃນການບໍຣິໂພກ (໕໗-໕໘)
໘. ບຸກຄົນຜູ້ມີສະຕິຫຼົງລືມ ບຸກຄົນຜູ້ບໍ່ມີສຳປະຊັນຍະ (໕໙-໖໐)
໙. ບຸກຄົນຜູ້ມີສີນວິບັດ ບຸກຄົນຜູ້ມີທິດຖິວິບັດ (໖໑-໖໒)
໑໐. ບຸກຄົນຜູ້ມີສັງໂຍດໃນພາຍໃນ ບຸກຄົນຜູ້ມີສັງໂຍດໃນພາຍນອກ (໖໓-໖໔)

| | | |
|---|---|---|
| ໑໑. ບຸກຄົນຜູ້ບໍ່ມັກໂກດ | ບຸກຄົນຜູ້ບໍ່ຜູກໂກດ | (໖໕-໖໖) |
| ໑໒. ບຸກຄົນຜູ້ບໍ່ລົບຫຼູ່ | ບຸກຄົນຜູ້ບໍ່ຕີສະເໝີ | (໖໗-໖໘) |
| ໑໓. ບຸກຄົນຜູ້ບໍ່ຣິດສະຫຍາ | ບຸກຄົນຜູ້ບໍ່ຂີ້ຖີ່ | (໖໙-໗໐) |
| ໑໔. ບຸກຄົນຜູ້ບໍ່ໂອ້ອວດ | ບຸກຄົນຜູ້ບໍ່ມີມາຍາ | (໗໑-໗໒) |
| ໑໕. ບຸກຄົນຜູ້ມີຫີຣິ | ບຸກຄົນຜູ້ມີໂອດຕັບປະ | (໗໓-໗໔) |
| ໑໖. ບຸກຄົນຜູ້ວ່າງ່າຍ | ບຸກຄົນຜູ້ມີມິດດີ | (໗໕-໗໖) |
| ໑໗. ບຸກຄົນຜູ້ຄຸ້ມຄອງທະວານໃນອິນຊີ | ບຸກຄົນຜູ້ຮູ້ປະມານໃນການບໍຣິໂພກ | (໗໗-໗໘) |
| ໑໘. ບຸກຄົນຜູ້ມີສະຕິຕັ້ງໝັ້ນ | ບຸກຄົນຜູ້ມີສໍາປະຊັນຍະ | (໗໙-໘໐) |
| ໑໙. ບຸກຄົນຜູ້ສົມບູນດ້ວຍສີນ | ບຸກຄົນຜູ້ສົມບູນດ້ວຍທິດຖິ | (໘໑-໘໒) |
| ໒໐. ບຸກຄົນຜູ້ຫາໄດ້ຍາກໃນໂລກ | ໒ ຈໍາພວກ (໘໓) | |
| ໒໑. ບຸກຄົນຜູ້ໃຫ້ອີ່ມໄດ້ຍາກ | ໒ ຈໍາພວກ (໘໔) | |
| ໒໒. ບຸກຄົນຜູ້ໃຫ້ອີ່ມໄດ້ງ່າຍ | ໒ ຈໍາພວກ (໘໕) | |
| ໒໓. ອາສະວະຂອງບຸກຄົນ | ໒ ຈໍາພວກເຫຼົ່າໃດຍ່ອມເພີ່ມພູນ | (໘໖) |
| ໒໔. ອາສະວະຂອງບຸກຄົນ | ໒ ຈໍາພວກເຫຼົ່າໃດຍ່ອມບໍ່ເພີ່ມພູນ | (໘໗) |
| ໒໕. ບຸກຄົນຜູ້ມີອັດທະຍາໄສຊົ່ວ | ບຸກຄົນຜູ້ມີອັດທະຍາໄສປະນີດ | (໘໘-໘໙) |
| ໒໖. ບຸກຄົນຜູ້ອີ່ມແລ້ວ | ບຸກຄົນຜູ້ເຮັດຄົນອື່ນໃຫ້ອີ່ມ | (໙໐) |

**ທຸກະອຸດເທດ ຈົບ**

# ໓. ຕິກະອຸດເທດ

## ໝວດວ່າດ້ວຍບຸກຄົນ ໓ ຈໍາພວກ

[໙] ບຸກຄົນ ໓ ຈໍາພວກ ຄື

໑. ບຸກຄົນທີ່ໝົດຄວາມຫວັງ ບຸກຄົນທີ່ຍັງມີຄວາມຫວັງ ບຸກຄົນທີ່ປາສະຈາກຄວາມຫວັງ (໙໑-໙໓)

໒. ບຸກຄົນປຽບເໝືອນຄົນໄຂ້ ໓ ຈໍາພວກ (໙໔)

໓. ບຸກຄົນຜູ້ເປັນກາຍະສັກຂີ ບຸກຄົນຜູ້ເປັນທິດຖິປັດຕະ ບຸກຄົນຜູ້ເປັນສັດທາວິມຸດຕະ (໙໕-໙໗)

໔. ບຸກຄົນຜູ້ເວົ້າພາສາຄູດ ບຸກຄົນຜູ້ເວົ້າພາສາດອກໄມ້ ບຸກຄົນຜູ້ເວົ້າພາສານໍ້າເຜີ້ງ (໙໘-໑໐໐)

໕. ບຸກຄົນຜູ້ມີຈິດເໝືອນບາດເກົ່າ ບຸກຄົນຜູ້ມີຈິດເໝືອນຟ້າແມບ ບຸກຄົນຜູ້ມີຈິດເໝືອນເພັດ (໑໐໑-໑໐໓)

໖. ບຸກຄົນຕາບອດ ບຸກຄົນຕາດຽວ ບຸກຄົນສອງຕາ (໑໐໔-໑໐໖)

໗. ບຸກຄົນຜູ້ມີປັນຍາເໝືອນໝໍ້ຂວ້ຳ ບຸກຄົນຜູ້ມີປັນຍາເໝືອນຖົງເນັບແອວ ບຸກຄົນຜູ້ມີປັນຍາກວ້າງຂວາງ (໑໐໗-໑໐໙)

໘. ບຸກຄົນບາງຄົນຍັງມີກາມຣາຄະແລະພະວະຣາຄະ ບຸກຄົນບາງຄົນບໍ່ມີກາມຣາຄະແຕ່ຍັງມີພະວະຣາຄະ ບຸກຄົນບາງຄົນບໍ່ມີທັງກາມຣາຄະ ແລະພາວະຣາຄະ (໑໑໐-໑໑໒)

໙. ບຸກຄົນຜູ້ປຽບເໝືອນຮອຍຂີດເທິງແຜ່ນຫີນ ບຸກຄົນຜູ້ປຽບເໝືອນຮອຍຂີດເທິງແຜ່ນດິນ ບຸກຄົນຜູ້ປຽບເໝືອນຮອຍຂີດຢູ່ໜ້ານ້ຳ (໑໑໓-໑໑໕)

໑໐. ບຸກຄົນປຽບເໝືອນຜ້າເປືອກໄມ້ ໓ ຈຳພວກ (໑໑໖)

໑໑. ບຸກຄົນປຽບເໝືອນຜ້າແຄວັນກາສີ ໓ ຈຳພວກ (໑໑໗)

໑໒. ບຸກຄົນຜູ້ປະເມີນໄດ້ງ່າຍ ບຸກຄົນຜູ້ປະເມີນໄດ້ຍາກ ບຸກຄົນຜູ້ປະເມີນບໍ່ໄດ້ (໑໑໘-໑໒໐)

໑໓. ບຸກຄົນບາງຄົນໃນໂລກນີ້ບໍ່ຄວນເສບ ບໍ່ຄວນຄົບ ບໍ່ຄວນເຂົ້າໄປນັ່ງໃກ້ ບຸກຄົນບາງຄົນໃນໂລກນີ້ຄວນເສບ ຄວນຄົບ ຄວນເຂົ້າໄປນັ່ງໃກ້ ບຸກຄົນບາງຄົນໃນໂລກນີ້ຄວນສັກກາຣະເຄົາລົບ ແລ້ວຈຶ່ງເສບຄົບເຂົ້າໄປນັ່ງໃກ້ (໑໒໑-໑໒໓)

໑໔. ບຸກຄົນບາງຄົນທີ່ຄວນຮັງກຽດ ບໍ່ຄວນເສບ ບໍ່ຄວນຄົບ ບໍ່ຄວນເຂົ້າໄປນັ່ງໃກ້ ບຸກຄົນບາງຄົນທີ່ຄວນວາງເສີຍ ບໍ່ຄວນເສບ ບໍ່ຄວນຄົບ ບໍ່ຄວນເຂົ້າໄປນັ່ງໃກ້ ບຸກຄົນບາງຄົນທີ່ຄວນເສບ ຄວນຄົບ ຄວນເຂົ້າໄປນັ່ງເຂົ້າໃກ້ (໑໒໔-໑໒໖)

໑໕. ບຸກຄົນບາງຄົນມີປົກກະຕິເຮັດໃຫ້ບໍລິບູນໃນສີນ ເຮັດໃຫ້ພໍປະມານໃນສະມາທິ ເຮັດໃຫ້ພໍປະມານໃນປັນຍາ ບຸກຄົນບາງຄົນມີປົກກະຕິເຮັດໃຫ້ບໍລິບູນໃນສີນ ເຮັດໃຫ້ບໍລິບູນໃນສະມາທິ ເຮັດໃຫ້ພໍປະມານໃນປັນຍາ ບຸກຄົນບາງຄົນມີປົກກະຕິເຮັດໃຫ້ບໍລິບູນໃນສີນ ເຮັດໃຫ້ບໍລິບູນໃນສະມາທິ ເຮັດໃຫ້ບໍລິບູນໃນປັນຍາ (໑໒໗-໑໒໙)

໑໖. ບຸກຄົນຜູ້ເປັນສາດສະດາ ໓ ຈຳພວກ (໑໓໐)

໑໗. ບຸກຄົນຜູ້ເປັນສາດສະດາ ໓ ຈຳພວກ ແມ່ນອື່ນອີກ (໑໓໑)

**ຕິກະອຸດເທດ ຈົບ**

# ໔. ຈະຕຸກກະອຸດເທດ

## ໝວດວ່າດ້ວຍບຸກຄົນ ໔ ຈຳພວກ

[໑໐] ບຸກຄົນ ໔ ຈຳພວກ ຄື

໑. ບຸກຄົນຜູ້ເປັນອະສັດຕະບຸຣຸດ ບຸກຄົນຜູ້ເປັນອະສັດຕະບຸຣຸດທີ່ຍິ່ງກວ່າອະສັດຕະບຸຣຸດ ບຸກຄົນຜູ້ເປັນສັດຕະບຸຣຸດ ບຸກຄົນຜູ້ເປັນສັດຕະບຸຣຸດທີ່ຍິ່ງກວ່າສັດຕະບຸຣຸດ (໑໓໒-໑໓໕)

໒. ບຸກຄົນຜູ້ເປັນຄົນຊົ່ວ ບຸກຄົນຜູ້ເປັນຄົນຊົ່ວທີ່ຍິ່ງກວ່າຄົນຊົ່ວ ບຸກຄົນຜູ້ເປັນຄົນດີ ບຸກຄົນຜູ້ເປັນຄົນດີທີ່ຍິ່ງກວ່າຄົນດີ (໑໓໖-໑໓໙)

໓. ບຸກຄົນຜູ້ມີທຳຊົ່ວ ບຸກຄົນຜູ້ມີທຳຊົ່ວທີ່ຍິ່ງກວ່າບຸກຄົນຜູ້ມີທຳຊົ່ວ ບຸກຄົນຜູ້ມີທຳດີ ບຸກຄົນຜູ້ມີທຳດີທີ່ຍິ່ງກວ່າບຸກຄົນຜູ້ມີທຳດີ (໑໔໐-໑໔໓)

໔. ບຸກຄົນຜູ້ມີແຕ່ໂທດ ບຸກຄົນຜູ້ມີໂທດເປັນສ່ວນຫຼາຍ ບຸກຄົນຜູ້ມີໂທດເປັນສ່ວນໜ້ອຍ ບຸກຄົນຜູ້ບໍ່ມີໂທດ (໑໔໔-໑໔໗)

໕. ບຸກຄົນຜູ້ເປັນອຸກຄະຕິຕັນຍູ ບຸກຄົນຜູ້ເປັນວິປະຈິຕັນຍູ ບຸກຄົນຜູ້ເປັນເນີຍຍະ ບຸກຄົນຜູ້ເປັນປະທະປະຣະມະ (໑໔໘-໑໕໑)

໖. ບຸກຄົນຜູ້ຕອບໄດ້ຖືກຕ້ອງແຕ່ບໍ່ວ່ອງໄວ ບຸກຄົນຜູ້ຕອບໄດ້ວ່ອງໄວແຕ່ບໍ່ຖືກຕ້ອງ ບຸກຄົນຜູ້ຕອບໄດ້ຖືກຕ້ອງແລະວ່ອງໄວ ບຸກຄົນຜູ້ຕອບໄດ້ບໍ່ຖືກຕ້ອງແລະບໍ່ວ່ອງໄວ (໑໕໒-໑໕໕)

໗. ບຸກຄົນຜູ້ເປັນທຳມະກະຖຶກ ໔ ຈຳພວກ (໑໕໖)

໘. ບຸກຄົນປຽບເໝືອນເມກ ໔ ຈຳພວກ (໑໕໗)

໙. ບຸກຄົນປຽບເໝືອນໜູ ໔ ຈຳພວກ (໑໕໘)

໑໐. ບຸກຄົນປຽບເໝືອນໝາກມ່ວງ ໔ ຈຳພວກ (໑໕໙)

໑໑. ບຸກຄົນປຽບເໝືອນໝໍ້ ໔ ຈຳພວກ (໑໖໐)

໑໒. ບຸກຄົນປຽບເໝືອນຫ້ວງນ້ຳ ໔ ຈຳພວກ (໑໖໑)

໑໓. ບຸກຄົນປຽບເໝືອນງົວເຖິກ ໔ ຈຳພວກ (໑໖໒)

໑໔. ບຸກຄົນປຽບເໝືອນອະສໍຣະພິດ ໔ ຈຳພວກ (໑໖໓)

໑໕. ບຸກຄົນບໍ່ພິຈາລະນາບໍ່ໄຕ່ຕອງແລ້ວກ່າວສັນເສີນຜູ້ຄວນຕິຕຽນຈຳພວກ ໑ ບຸກຄົນບໍ່ພິຈາລະນາບໍ່ໄຕ່ຕອງແລ້ວກ່າວຕິຕຽນຜູ້ຄວນສັນເສີນຈຳພວກ ໑ ບຸກຄົນບໍ່ພິຈາລະນາບໍ່ໄຕ່ຕອງແລ້ວສະແດງຄວາມເຫຼື້ອມໃສໃນຖານະທີ່ບໍ່

ຄວນເຫຼື້ອມໃສຈຳພວກ ໑ ບຸກຄົນບໍ່ພິຈາລະນາບໍ່ໄຕ່ຕອງແລ້ວສະແດງ ຄວາມບໍ່ເຫຼື້ອມໃສໃນຖານະທີ່ຄວນເຫຼື້ອມໃສຈຳພວກ ໑ (໑໒໔)

໑໖. ບຸກຄົນພິຈາລະນາໄຕ່ຕອງແລ້ວກ່າວຕິຕຽນຜູ້ຄວນຕິຕຽນຈຳພວກ ໑ ບຸກຄົນພິຈາລະນາໄຕ່ຕອງແລ້ວກ່າວສັນເສີນຜູ້ຄວນສັນເສີນຈຳພວກ ໑ ບຸກຄົນພິຈາລະນາໄຕ່ຕອງແລ້ວສະແດງຄວາມບໍ່ເຫຼື້ອມໃສໃນຖານະທີ່ບໍ່ຄວນເຫຼື້ອມໃສຈຳພວກ ໑ ບຸກຄົນພິຈາລະນາໄຕ່ຕອງແລ້ວສະແດງຄວາມເຫຼື້ອມໃສໃນຖານະທີ່ຄວນເຫຼື້ອມໃສຈຳພວກ ໑ (໑໒໕)

໑໗. ບຸກຄົນກ່າວຕິຕຽນຜູ້ຄວນຕິຕຽນຕາມຄວາມເປັນຈິງເໝາະແກ່ການແຕ່ບໍ່ກ່າວສັນເສີນຜູ້ຄວນສັນເສີນຕາມຄວາມເປັນຈິງເໝາະແກ່ການຈຳພວກ ໑ ບຸກຄົນກ່າວສັນເສີນຜູ້ຄວນສັນເສີນຕາມຄວາມເປັນຈິງເໝາະແກ່ການແຕ່ບໍ່ກ່າວຕິຕຽນຜູ້ຄວນຕິຕຽນຕາມຄວາມເປັນຈິງເໝາະແກ່ການຈຳພວກ ໑ ບຸກຄົນກ່າວຕິຕຽນຜູ້ຄວນຕິຕຽນຕາມຄວາມເປັນຈິງເໝາະແກ່ການແລະກ່າວສັນເສີນຜູ້ຄວນສັນເສີນຕາມຄວາມເປັນຈິງເໝາະແກ່ການຈຳພວກ ໑ ບຸກຄົນບໍ່ກ່າວຕິຕຽນຜູ້ຄວນຕິຕຽນຕາມຄວາມເປັນຈິງເໝາະແກ່ການແລະບໍ່ກ່າວສັນເສີນຜູ້ຄວນສັນເສີນຕາມຄວາມເປັນຈິງເໝາະແກ່ການຈຳພວກ ໑ (໑໒໖)

໑໘. ບຸກຄົນຜູ້ດຳຣົງຊີບດ້ວຍຜົນແຫ່ງຄວາມຂະຫຍັນໝັ່ນພຽນ ແຕ່ບໍ່ດຳຣົງຊີບດ້ວຍຜົນແຫ່ງບຸນ ບຸກຄົນຜູ້ດຳຣົງຊີບດ້ວຍຜົນແຫ່ງບຸນແຕ່ບໍ່ດຳຣົງຊີບດ້ວຍຜົນແຫ່ງຄວາມຂະຫຍັນໝັ່ນພຽນ ບຸກຄົນຜູ້ດຳຣົງຊີບດ້ວຍຜົນແຫ່ງຄວາມຂະຫຍັນໝັ່ນພຽນແລະດຳຣົງຊີບດ້ວຍຜົນແຫ່ງບຸນ ບຸກຄົນຜູ້ບໍ່ດຳຣົງຊີບດ້ວຍຜົນແຫ່ງຄວາມຂະຫຍັນໝັ່ນພຽນແລະບໍ່ດຳຣົງຊີບດ້ວຍຜົນແຫ່ງບຸນ (໑໒໗)

໑໙. ບຸກຄົນຜູ້ມືດມາແລະມືດໄປ ບຸກຄົນຜູ້ມືດມາແຕ່ສະຫວ່າງໄປ ບຸກຄົນຜູ້ສະຫວ່າງມາແຕ່ມືດໄປ ບຸກຄົນຜູ້ສະຫວ່າງມາແລະສະຫວ່າງໄປ (໑໒໘)

໔໐. ບຸກຄົນຜູ້ຕ່ຳມາແລະຕ່ຳໄປ ບຸກຄົນຜູ້ຕ່ຳມາແຕ່ສູງໄປ ບຸກຄົນຜູ້ສູງມາແຕ່ຕ່ຳໄປ ບຸກຄົນຜູ້ສູງມາແລະສູງໄປ (໑໒໙)

໔໑. ບຸກຄົນປຽບເໝືອນຕົ້ນໄມ້ ໔ ຈຳພວກ (໑໓໐)

໔໔. ບຸກຄົນຜູ້ຖືຮູບເປັນປະມານ ເຫຼື້ອມໃສໃນຮູບ ບຸກຄົນຜູ້ຖືສຽງເປັນປະມານເຫຼື້ອມໃສໃນສຽງ (໑໓໑)

໔໓. ບຸກຄົນຜູ້ຖືຄວາມເສົ້າໝອງເປັນປະມານ ເຫຼື້ອມໃສໃນຄວາມເສົ້າໝອງ ບຸກຄົນຜູ້ຖືທຳເປັນປະມານ ເຫຼື້ອມໃນໃນທຳ (໑໓໔)

໘໔. ບຸກຄົນຜູ້ປະຕິບັດເພື່ອເກື້ອກູນຕົນເອງແຕ່ບໍ່ປະຕິບັດເພື່ອເກື້ອກູນຜູ້ອື່ນຈຳພວກ ໑ ບຸກຄົນຜູ້ປະຕິບັດເພື່ອເກື້ອກູນຜູ້ອື່ນແຕ່ບໍ່ປະຕິບັດເພື່ອເກື້ອກູນຕົນເອງຈຳພວກ ໑ ບຸກຄົນຜູ້ປະຕິບັດເພື່ອເກື້ອກູນຕົນເອງແລະປະຕິບັດເພື່ອເກື້ອກູນຜູ້ອື່ນຈຳພວກ ໑ ບຸກຄົນຜູ້ບໍ່ປະຕິບັດເພື່ອເກື້ອກູນຕົນເອງແລະບໍ່ປະຕິບັດເພື່ອເກື້ອກູນຜູ້ອື່ນຈຳພວກ ໑ (໑໗໙)

໘໕. ບຸກຄົນຜູ້ທຳຕົນໃຫ້ເດືອດຮ້ອນໝັ່ນປະກອບໃນການເຮັດຕົນໃຫ້ເດືອດຮ້ອນຈຳພວກ ໑ ບຸກຄົນຜູ້ເຮັດຜູ້ອື່ນໃຫ້ເດືອດຮ້ອນ ໝັ່ນປະກອບໃນການເຮັດຜູ້ອື່ນໃຫ້ເດືອດຮ້ອນຈຳພວກ ໑ ບຸກຄົນຜູ້ເຮັດຕົນໃຫ້ເດືອດຮ້ອນໝັ່ນປະກອບໃນການເຮັດຕົນໃຫ້ເດືອດຮ້ອນ ແລະເຮັດຜູ້ອື່ນໃຫ້ເດືອດຮ້ອນໝັ່ນປະກອບໃນການເຮັດຜູ້ອື່ນໃຫ້ເດືອດຮ້ອນຈຳພວກ ໑ ບຸກຄົນຜູ້ບໍ່ເຮັດຕົນໃຫ້ເດືອດຮ້ອນບໍ່ໝັ່ນປະກອບໃນການເຮັດຕົນໃຫ້ເດືອດຮ້ອນແລະບໍ່ເຮັດຜູ້ອື່ນໃຫ້ເດືອດຮ້ອນບໍ່ໝັ່ນປະກອບໃນການເຮັດຜູ້ອື່ນໃຫ້ເດືອດຮ້ອນຈຳພວກ ໑ ບຸກຄົນນັ້ນບໍ່ເຮັດຕົນໃຫ້ເດືອດຮ້ອນ ບໍ່ເຮັດຜູ້ອື່ນໃຫ້ເດືອດຮ້ອນ ເປັນຜູ້ບໍ່ຫິວ ດັບຮ້ອນເຢັນໃຈ ສະເຫວີຍສຸກ ມີຕົນປະເສີດຢູ່ໃນປັດຈຸບັນ (໑໗໘-໑໗໕)

໘໖. ບຸກຄົນຜູ້ມີຣາຄະ ບຸກຄົນຜູ້ມີໂທສະ ບຸກຄົນຜູ້ມີໂມຫະ ບຸກຄົນຜູ້ມີມານະ(໑໗໖)

໘໗. ບຸກຄົນຜູ້ໄດ້ຄວາມສະງົບແຫ່ງຈິດພາຍໃນ ແຕ່ບໍ່ໄດ້ຄວາມເຫັນແຈ້ງທຳດ້ວຍປັນຍາອັນຍິ່ງຈຳພວກ ໑ ບຸກຄົນຜູ້ໄດ້ຄວາມເຫັນແຈ້ງທຳດ້ວຍປັນຍາອັນຍິ່ງແຕ່ບໍ່ໄດ້ຄວາມສະງົບແຫ່ງຈິດພາຍໃນຈຳພວກ ໑ ບຸກຄົນຜູ້ໄດ້ຄວາມສະງົບແຫ່ງຈິດພາຍໃນແລະໄດ້ຄວາມເຫັນແຈ້ງທຳດ້ວຍປັນຍາອັນຍິ່ງຈຳພວກ ໑ ບຸກຄົນຜູ້ບໍ່ໄດ້ຄວາມສະງົບແຫ່ງຈິດພາຍໃນແລະບໍ່ໄດ້ຄວາມເຫັນແຈ້ງທຳດ້ວຍປັນຍາອັນຍິ່ງຈຳພວກ ໑ (໑໗໗)

໘໘. ບຸກຄົນຜູ້ໄປຕາມກະແສ ບຸກຄົນຜູ້ໄປທວນກະແສ ບຸກຄົນຜູ້ມີພາວະຕັ້ງໝັ້ນ ບຸກຄົນຜູ້ລອຍບາບຂ້າມຮອດຝັ່ງດຳຣົງຢູ່ເທິງບົກ (໑໗໘)

໘໙. ບຸກຄົນຜູ້ມີສຸຕະໜ້ອຍທັງບໍ່ເຂົ້າເຖິງສຸຕະ ບຸກຄົນຜູ້ມີສຸຕະໜ້ອຍແຕ່ເຂົ້າເຖິງສຸຕະ ບຸກຄົນຜູ້ມີສຸຕະຫຼາຍແຕ່ບໍ່ເຂົ້າເຖິງສຸຕະ ບຸກຄົນຜູ້ມີສຸຕະຫຼາຍທັງເຂົ້າເຖິງສຸຕະ (໑໗໙)

໙໐. ບຸກຄົນຜູ້ເປັນສະມະນະບໍ່ຫວັ່ນໄຫວ ບຸກຄົນຜູ້ເປັນສະມະນະເໝືອນດອກປະທຸມ ບຸກຄົນຜູ້ເປັນສະມະນະເໝືອນດອກບຸນທະຣິກ ບຸກຄົນຜູ້ເປັນສະມະນະຜູ້ລະອຽດອ່ອນໃນໝູ່ສະມະນະ (໑໘໐)

**ຈະຕຸກກະອຸດເທດ ຈົບ**

# ๕. ປັນຈະກະອຸດເທດ

## ໝວດວ່າດ້ວຍບຸກຄົນ ໕ ຈຳພວກ

[๑๑] ບຸກຄົນ ໕ ຈຳພວກ ຄື

๑. ບຸກຄົນຜູ້ຕ້ອງອາບັດແລະເດືອດຮ້ອນທັງບໍ່ຮູ້ຊັດແຈ້ງຕາມຄວາມເປັນຈິງເຊິ່ງເຈໂຕວິມຸດຕິ ປັນຍາວິມຸດຕິ ອັນເປັນທີ່ດັບໄປໂດຍບໍ່ເຫຼືອແຫ່ງສະພາວະທຳເຫຼົ່ານັ້ນທີ່ເປັນອະກຸສົນເຊິ່ງເປັນບາບອັນເກີດຂຶ້ນແກ່ຕົນຈຳພວກ ๑ ບຸກຄົນຜູ້ຕ້ອງອາບັດແຕ່ບໍ່ເດືອດຮ້ອນທັງບໍ່ຮູ້ຊັດແຈ້ງຕາມຄວາມເປັນຈິງເຊິ່ງເຈໂຕວິມຸດຕິ ປັນຍາວິມຸດຕິອັນເປັນທີ່ດັບໄປໂດຍບໍ່ເຫຼືອແຫ່ງສະພາວະທຳເຫຼົ່ານັ້ນທີ່ເປັນອະກຸສົນເຊິ່ງເປັນບາບອັນເກີດຂຶ້ນແກ່ຕົນຈຳພວກ ๑ ບຸກຄົນຜູ້ບໍ່ຕ້ອງອາບັດ ແຕ່ເດືອດຮ້ອນແລະບໍ່ຮູ້ຊັດແຈ້ງຕາມຄວາມເປັນຈິງເຊິ່ງເຈໂຕວິມຸດຕິ ປັນຍາວິມຸດຕິ ອັນເປັນທີ່ດັບໄປໂດຍບໍ່ເຫຼືອແຫ່ງສະພາວະທຳເຫຼົ່ານັ້ນທີ່ເປັນອະກຸສົນເຊິ່ງເປັນບາບອັນເກີດຂຶ້ນແກ່ຕົນຈຳພວກ ๑ ບຸກຄົນຜູ້ບໍ່ຕ້ອງອາບັດ ບໍ່ເດືອດຮ້ອນ ແຕ່ບໍ່ຮູ້ຊັດແຈ້ງຕາມຄວາມເປັນຈິງເຊິ່ງເຈໂຕວິມຸດຕິ ປັນຍາວິມຸດຕິອັນເປັນທີ່ດັບໄປໂດຍບໍ່ເຫຼືອແຫ່ງສະພາວະທຳເຫຼົ່ານັ້ນທີ່ເປັນອະກຸສົນເຊິ່ງເປັນບາບອັນເກີດຂຶ້ນແກ່ຕົນຈຳພວກ ๑ ບຸກຄົນຜູ້ບໍ່ຕ້ອງອາບັດ ບໍ່ເດືອດຮ້ອນ ແລະຮູ້ຊັດແຈ້ງຕາມຄວາມເປັນຈິງເຊິ່ງເຈໂຕວິມຸດຕິ ປັນຍາວິມຸດຕິອັນເປັນທີ່ດັບໄປໂດຍບໍ່ເຫຼືອແຫ່ງສະພາວະທຳເຫຼົ່ານັ້ນທີ່ເປັນອະກຸສົນເຊິ່ງເປັນບາບອັນເກີດຂຶ້ນແກ່ຕົນຈຳພວກ ๑ (๑๗๑)

๒. ບຸກຄົນໃຫ້ແລ້ວດູໝິ່ນ ບຸກຄົນດູໝິ່ນດ້ວຍການຢູ່ຮ່ວມກັນ ບຸກຄົນຜູ້ເຊື່ອງ່າຍ ບຸກຄົນຜູ້ໂລເລ ບຸກຄົນຜູ້ໂງ່ງົມງາຍ (๑๗๒)

๓. ບຸກຄົນປຽບເໝືອນນັກຮົບອາຊີບ ໕ ຈຳພວກ (๑๗๓-๑๗๗)

๔. ພິກຂຸຜູ້ຖືບິນທະບາດເປັນວັດ ໕ ຈຳພວກ (๑๗๘)

๕. ພິກຂຸຜູ້ຖືການຫ້າມພັດອັນເຂົານຳມາຖວາຍໃນພາຍຫຼັງເປັນວັດ ໕ ຈຳພວກ (๒๐๐)

๖. ພິກຂຸຜູ້ຖືການນັ່ງສັນອາສະນະດຽວເປັນວັດ

๗. ພິກຂຸຜູ້ຖືຜ້າບັງສຸກຸນເປັນວັດ ໕ ຈຳພວກ

๘. ພິກຂຸຜູ້ຖືຜ້າໄຕຣຈີວອນເປັນວັດ ໕ ຈຳພວກ

๙. ພິກຂຸຜູ້ຖືການຢູ່ປ່າເປັນວັດ ໕ ຈຳພວກ

๑๐. ພິກຂຸຜູ້ຖືການຢູ່ເຫງົ້າໄມ້ເປັນວັດ ໕ ຈຳພວກ

๑๑. ພິກຂຸຜູ້ຖືການຢູ່ກາງແຈ້ງເປັນວັດ ໕ ຈຳພວກ

໑໘. ພິກຂຸຜູ້ຖືການນັ່ງເປັນວັດ ໕ ຈຳພວກ
໑໙. ພິກຂຸຜູ້ຖືການນັ່ງເທິງອາສະນະຕາມທີ່ໄດ້ຈັດໄວ້ເປັນວັດ ໕ ຈຳພວກ
໑໔. ພິກຂຸຜູ້ຖືການຢູ່ປ່າຊ້າເປັນວັດ ໕ ຈຳພວກ (໔໐໑)

**ປັນຈະກະອຸດເທດ ຈົບ**

# ໖. ສັກກະອຸດເທດ

## ໝວດວ່າດ້ວຍບຸກຄົນ ໖ ຈຳພວກ

[໑໘] ບຸກຄົນ ໖ ຈຳພວກ ຄື

໑. ບຸກຄົນຜູ້ຕັດສະຣູ້ສັດຈະດ້ວຍຕົນເອງໃນທຳທີ່ບໍ່ເຄີຍສະດັບມາກ່ອນ ເຖິງຄວາມເປັນສັບພັນຍູໃນທຳນັ້ນ ແລະເຖິງຄວາມຊຳນານໃນທົດສະພົນຍານ ຈຳພວກ ໑ ບຸກຄົນຜູ້ຕັດສະຣູ້ສັດຈະດ້ວຍຕົນເອງໃນທຳທີ່ບໍ່ເຄີຍສະດັບມາກ່ອນ ແຕ່ບໍ່ເຖິງຄວາມເປັນສັບພັນຍູໃນທຳນັ້ນ ແລະບໍ່ເຖິງຄວາມຊຳນານໃນທົດສະພົນຍານຈຳພວກ ໑ ບຸກຄົນຜູ້ບໍ່ຕັດສະຣູ້ສັດຈະດ້ວຍຕົນເອງໃນທຳທີ່ບໍ່ເຄີຍສະດັບມາກ່ອນ ເປັນຜູ້ເຮັດບ່ອນສຸດແຫ່ງທຸກໄດ້ໃນປັດຈຸບັນ ແລະບັນລຸສາວົກປາຣະມີຈຳພວກ ໑ ບຸກຄົນຜູ້ບໍ່ຕັດສະຣູ້ສັດຈະດ້ວຍຕົນເອງໃນທຳທີ່ບໍ່ເຄີຍສະດັບມາກ່ອນ ເປັນຜູ້ເຮັດບ່ອນສຸດແຫ່ງທຸກໄດ້ໃນປັດຈຸບັນ ແຕ່ບໍ່ບັນລຸສາວົກປາຣະມີຈຳພວກ ໑ ບຸກຄົນຜູ້ບໍ່ຕັດສະຣູ້ສັດຈະດ້ວຍຕົນເອງໃນທຳທີ່ບໍ່ເຄີຍສະດັບມາກ່ອນແລະບໍ່ໄດ້ເຮັດບ່ອນສຸດແຫ່ງທຸກໃນປັດຈຸບັນ ເປັນພຣະອະນາຄາມີ ບໍ່ມາສູ່ໂລກນີ້ອີກຈຳພວກ ໑ ບຸກຄົນຜູ້ບໍ່ຕັດສະຣູ້ສັດຈະດ້ວຍຕົນເອງໃນທຳທີ່ບໍ່ເຄີຍສະດັບມາກ່ອນແລະບໍ່ໄດ້ເຮັດບ່ອນສຸດແຫ່ງທຸກໃນປັດຈຸບັນ ເປັນພຣະໂສດາບັນ ເປັນພຣະສະກະທາຄາມີ ຍັງມາສູ່ໂລກນີ້ອີກຈຳພວກ ໑ (໔໐໘)

**ສັກກະອຸດເທດ ຈົບ**

# ໗. ສັດຕະກະອຸດເທດ

## ໝວດວ່າດ້ວຍບຸກຄົນ ໗ ຈຳພວກ

[໑໙] ບຸກຄົນ ໗ ຈຳພວກ ຄື

(໑) ບຸກຄົນປຽບເໝືອນຄົນຕົກນ້ຳ ໗ ຈຳພວກ ຄື

໑. ບຸກຄົນຜູ້ຈົມລົງແລ້ວກໍຍັງຈົມຢູ່ອີກ
໒. ບຸກຄົນຜູ້ຜຸດຂຶ້ນແລ້ວຈົມລົງອີກ
໓. ບຸກຄົນຜູ້ຜຸດຂຶ້ນແລ້ວຢຸດຢູ່
໔. ບຸກຄົນຜູ້ຜຸດຂຶ້ນແລ້ວຫຼຽວແນມເບິ່ງ
໕. ບຸກຄົນຜູ້ຜຸດຂຶ້ນແລ້ວຂ້າມໄປ
໖. ບຸກຄົນຜູ້ຜຸດຂຶ້ນແລ້ວໄດ້ບ່ອນເພິ່ງ
໗. ບຸກຄົນຜູ້ຜຸດຂຶ້ນແລ້ວຂ້າມໄປຮອດຝັ່ງເປັນຜູ້ລອຍບາບຢູ່ເທິງບົກ (໒໐໓)

(໒) ບຸກຄົນຜູ້ເປັນອຸພະໂຕພາຄະວິມຸດຕະ (໒໐໔)
ບຸກຄົນຜູ້ເປັນປັນຍາວິມຸດຕະ (໒໐໕)
ບຸກຄົນຜູ້ເປັນກາຍະສັກຂີ
ບຸກຄົນຜູ້ເປັນທິດຖິປັດຕະ
ບຸກຄົນຜູ້ເປັນສັດທາວິມຸດຕະ
ບຸກຄົນຜູ້ເປັນທຳມານຸສາຣີ
ບຸກຄົນຜູ້ເປັນສັດທານຸສາຣີ (໒໐໖)

**ສັດຕະກະອຸດເທດ ຈົບ**

## ໘. ອັດຖະກະອຸດເທດ

## ໝວດວ່າດ້ວຍບຸກຄົນ ໘ ຈຳພວກ

[໑໔] ບຸກຄົນ ໘ ຈຳພວກ ຄື

(໑) ບຸກຄົນຜູ້ພ້ອມພຽງດ້ວຍມັກ ໔ ຈຳພວກ ບຸກຄົນຜູ້ພ້ອມພຽງດ້ວຍຜົນ ໔ ຈຳພວກ (໒໐໗)

**ອັດຖະກະອຸດເທດ ຈົບ**

## ໙. ນະວະກະອຸດເທດ

### ໝວດວ່າດ້ວຍບຸກຄົນ ໙ ຈຳພວກ

[໑໕] ບຸກຄົນ ໙ ຈຳພວກ ຄື

໑. ບຸກຄົນຜູ້ເປັນສຳມາສຳພຸດທະ

໒. ບຸກຄົນຜູ້ເປັນປັດເຈກະພຸດທະ

໓. ບຸກຄົນຜູ້ເປັນອຸພະໂຕພາຄະວິມຸດຕະ
໕. ບຸກຄົນຜູ້ເປັນກາຍະສັກຂີ
໗. ບຸກຄົນຜູ້ເປັນສັດທາວິມຸດຕະ
໙. ບຸກຄົນຜູ້ເປັນສັດທານຸສາຣີ (໔໐໗)
໔. ບຸກຄົນຜູ້ເປັນປັນຍາວິມຸດຕະ
໖. ບຸກຄົນຜູ້ເປັນທິດຖິປັດຕະ
໘. ບຸກຄົນຜູ້ເປັນທຳມານຸສາຣີ

**ນະວະກະອຸດເທດ ຈົບ**

## ໑໐. ທະສະກະອຸດເທດ

## ໝວດວ່າດ້ວຍບຸກຄົນ ໑໐ ຈຳພວກ

[໑໖] ບຸກຄົນ ໑໐ ຈຳພວກ ຄື

(໑) ບຸກຄົນຜູ້ມີຄວາມສຳເລັດໃນການາວະຈອນພູມນີ້ ໕ ຈຳພວກ ບຸກຄົນຜູ້ລະອັດຕະພາບໃນການາວະຈອນພູມນີ້ແລ້ວສຳເລັດ ໕ ຈຳພວກ (໔໐໙)

**ທະສະກະອຸດເທດ ຈົບ**

**ມາຕິກາປຸກຄະລະບັນຍັດ ຈົບ**

# ນິດເທດ

## ໑. ເອກກະປຸກຄະລະບັນຍັດ

[໑] ບຸກຄົນຜູ້ເປັນສະມະຍະວິມຸດຕະ ເປັນແນວໃດ?

ບຸກຄົນບາງຄົນໃນໂລກນີ້ສຳຜັດວິໂມກ ໘ ດ້ວຍກາຍທຸກການ ທຸກສະໄໝ ແລະອາສະວະທັງຫຼາຍຂອງເຂົາຍ່ອມສິ້ນໄປຍ້ອນເຫັນດ້ວຍປັນຍາ ບຸກຄົນນີ້ຮຽກວ່າ ຜູ້ເປັນສະມະຍະວິມຸດຕະ

[໒] ບຸກຄົນຜູ້ເປັນອະສະມະຍະວິມຸດຕະ ເປັນແນວໃດ?

ບຸກຄົນບາງຄົນໃນໂລກນີ້ບໍ່ໄດ້ສຳຜັດວິໂມກ ໘ ດ້ວຍກາຍທຸກການທຸກສະໄໝແຕ່ອາສະວະທັງຫຼາຍຂອງເຂົາຍ່ອມສິ້ນໄປຍ້ອນເຫັນດ້ວຍປັນຍາ ບຸກຄົນນີ້ຮຽກວ່າ ຜູ້ເປັນອະສະມະຍະວິມຸດຕະ ແມ່ນພຣະອະຣິຍະບຸກຄົນທັງໝົດ ກໍຊື່ວ່າຜູ້ເປັນອະສະມະຍະວິມຸດຕະໃນອະຣິຍະວິໂມກ

[໓] ບຸກຄົນຜູ້ເປັນກຸບປະທຳ ເປັນແນວໃດ?

ບຸກຄົນບາງຄົນໃນໂລກນີ້ມີປົກກະຕິໄດ້ສະມາບັດມີຮູບເປັນອາລົມ ຫຼື ມີອະຮູບເປັນອາລົມ ແຕ່ບຸກຄົນນັ້ນບໍ່ແມ່ນໄດ້ຕາມທີ່ຕ້ອງການ ບໍ່ແມ່ນໄດ້ໂດຍບໍ່ຍາກ ບໍ່ແມ່ນໄດ້ໂດຍບໍ່ລຳບາກ ບໍ່ແມ່ນຈະເຂົ້າ ຫຼື ອອກຈາກສະມາບັດໄດ້ຕາມໂອກາດທີ່ຕ້ອງການ ຕາມສະມາບັດທີ່ຕ້ອງການ ຕາມກຳນົດ ເວລາທີ່ຕ້ອງການ ຂໍ້ທີ່ສະມາບັດເຫຼົ່ານັ້ນ ຈະເພິ່ງເສື່ອມຍ້ອນອາໄສຄວາມຜະໝາດຂອງບຸກຄົນນັ້ນ ໆ ເປັນຖານະທີ່ຈະມີໄດ້ ບຸກຄົນນີ້ຮຽກວ່າ ຜູ້ເປັນກຸບປະທຳ

[໔] ບຸກຄົນຜູ້ເປັນອະກຸບປະທຳ ເປັນແນວໃດ?

ບຸກຄົນບາງຄົນໃນໂລກນີ້ມີປົກກະຕິໄດ້ສະມາບັດມີຮູບເປັນອາລົມ ຫຼື ມີອະຮູບເປັນອາລົມ ແລະບຸກຄົນນັ້ນເປັນຜູ້ໄດ້ຕາມທີ່ຕ້ອງການໄດ້ໂດຍບໍ່ຍາກ ໄດ້ໂດຍບໍ່ລຳບາກ ຈະເຂົ້າ ຫຼື ອອກຈາກສະມາບັດໄດ້ຕາມໂອກາດທີ່ຕ້ອງການ ຕາມສະມາບັດທີ່ຕ້ອງການ ຕາມກຳນົດເວລາທີ່ຕ້ອງການ ຂໍ້ທີ່ສະມາບັດເຫຼົ່ານັ້ນຈະເພິ່ງເສື່ອມໄປຍ້ອນອາໄສຄວາມຜະໝາດຂອງບຸກຄົນນັ້ນ ໆ ບໍ່ແມ່ນຖານະ ບໍ່ແມ່ນໂອກາດ ບຸກຄົນນີ້ຮຽກວ່າ ຜູ້ເປັນອະກຸບປະທຳ ພຣະອະຣິຍະບຸກຄົນແມ່ນທັງໝົດກໍ່ຊື່ວ່າຜູ້ເປັນອະກຸບປະທຳໃນອະຣິຍະວິໄນກ

[໕] ບຸກຄົນຜູ້ເປັນປະຣິຫານະທຳ ເປັນແນວໃດ?

ບຸກຄົນບາງຄົນໃນໂລກນີ້ມີປົກກະຕິໄດ້ສະມາບັດມີຮູບເປັນອາລົມ ຫຼື ມີອະຮູບເປັນອາລົມ ແຕ່ບຸກຄົນນັ້ນບໍ່ແມ່ນໄດ້ຕາມທີ່ຕ້ອງການ ບໍ່ແມ່ນໄດ້ໂດຍບໍ່ຍາກ ບໍ່ແມ່ນໄດ້ໂດຍບໍ່ລຳບາກ ບໍ່ແມ່ນຈະເຂົ້າຫຼືອອກຈາກສະມາບັດໄດ້ຕາມໂອກາດທີ່ຕ້ອງການ ຕາມສະມາບັດທີ່ຕ້ອງການ ຕາມກຳນົດເວລາທີ່ຕ້ອງການ ຂໍ້ທີ່ບຸກຄົນນັ້ນ ຈະເພິ່ງເສື່ອມຈາກສະມາບັດເຫຼົ່ານັ້ນ ຍ້ອນອາໄສຄວາມຜະໝາດນັ້ນເປັນຖານະທີ່ຈະມີໄດ້ ບຸກຄົນນີ້ຮຽກວ່າ ຜູ້ເປັນປະຣິຫານະທຳ

[໖] ບຸກຄົນຜູ້ເປັນອະປະຣິຫານະທຳ ເປັນແນວໃດ?

ບຸກຄົນບາງຄົນໃນໂລກນີ້ມີປົກກະຕິໄດ້ສະມາບັດມີຮູບເປັນອາລົມ ຫຼື ມີອະຮູບເປັນອາລົມ ແລະບຸກຄົນນັ້ນເປັນຜູ້ໄດ້ຕາມທີ່ຕ້ອງການ ໄດ້ໂດຍບໍ່ຍາກ ໄດ້ໂດຍບໍ່ລຳບາກ ຈະເຂົ້າຫຼືອອກຈາກສະມາບັດໄດ້ຕາມໂອກາດທີ່ຕ້ອງການ ຕາມສະມາບັດທີ່ຕ້ອງການ ຕາມກຳນົດເວລາທີ່ຕ້ອງການ ຂໍ້ທີ່ບຸກຄົນນັ້ນຈະເພິ່ງເສື່ອມຈາກສະມາບັດນັ້ນຍ້ອນອາໄສຄວາມຜະໝາດ ນັ້ນບໍ່ແມ່ນຖານະ ບໍ່ແມ່ນໂອກາດ ບຸກຄົນນີ້ຮຽກວ່າ ຜູ້ເປັນອະປະຣິຫານະທຳ ພຣະອະຣິຍະບຸກຄົນແມ່ນທັງໝົດກໍ່ຊື່ວ່າຜູ້ເປັນອະປະຣິຫານະທຳໃນອະຣິຍະວິໄນກ

[໗] ບຸກຄົນຜູ້ເປັນເຈຕະນາພັບພະ ເປັນແນວໃດ?

ບຸກຄົນບາງຄົນໃນໂລກນີ້ມີປົກກະຕິໄດ້ສະມາບັດມີຮູບເປັນອາລົມ ຫຼື ມີອະຮູບເປັນອາລົມ ແຕ່ບຸກຄົນນັ້ນບໍ່ແມ່ນຈະໄດ້ຕາມທີ່ຕ້ອງການ ບໍ່ແມ່ນຈະໄດ້ໂດຍບໍ່ຍາກ ບໍ່ແມ່ນຈະໄດ້ໂດຍບໍ່ລຳບາກ ບໍ່ແມ່ນຈະເຂົ້າຫຼືອອກຈາກສະມາບັດໄດ້ຕາມໂອກາດທີ່ຕ້ອງການ ຕາມສະມາບັດ

ທີ່ຕ້ອງການ ຕາມກຳນົດເວລາທີ່ຕ້ອງການ ຖ້າຕາມໃສ່ໃຈຍ່ອມບໍ່ເສື່ອມຈາກສະມາບັດເຫຼົ່ານັ້ນ ຖ້າບໍ່ຕາມໃສ່ໃຈ ຍ່ອມເສື່ອມຈາກສະມາບັດເຫຼົ່ານັ້ນ ບຸກຄົນນີ້ຮຽກວ່າ ຜູ້ເປັນເຈຕະນາພັບພະ

[໗] ບຸກຄົນຜູ້ເປັນອະນຸຣັກຂະນາພັບພະ ເປັນແນວໃດ?

ບຸກຄົນບາງຄົນໃນໂລກນີ້ມີປົກກະຕິໄດ້ສະມາບັດມີຮູບເປັນອາລົມ ຫຼື ມີອະຮູບເປັນອາລົມ ແຕ່ບຸກຄົນນັ້ນບໍ່ແມ່ນຈະໄດ້ຕາມທີ່ຕ້ອງການ ບໍ່ແມ່ນຈະໄດ້ໂດຍບໍ່ຍາກ ບໍ່ແມ່ນຈະໄດ້ໂດຍບໍ່ລຳບາກ ບໍ່ແມ່ນຈະເຂົ້າສະມາບັດ ຫຼື ອອກຈາກສະມາບັດໄດ້ຕາມໂອກາດທີ່ຕ້ອງການ ຕາມສະມາບັດທີ່ຕ້ອງການ ຕາມກຳນົດເວລາທີ່ຕ້ອງການ ຖ້າຕາມຮັກສາ ຍ່ອມບໍ່ເສື່ອມຈາກສະມາບັດເຫຼົ່ານັ້ນ ຖ້າບໍ່ຕາມຮັກສາ ຍ່ອມເສື່ອມຈາກສະມາບັດເຫຼົ່ານັ້ນ ບຸກຄົນນີ້ຮຽກວ່າຜູ້ເປັນອະນຸຣັກຂະນາພັບພະ

[໘] ບຸກຄົນຜູ້ເປັນປຸຖຸຊົນ ເປັນແນວໃດ?

ບຸກຄົນໃດຍັງລະສັງໂຍດ ໓ ບໍ່ໄດ້ແລະບໍ່ປະຕິບັດເພື່ອລະສະພາວະທຳເຫຼົ່ານັ້ນ ບຸກຄົນນີ້ຮຽກວ່າ ຜູ້ເປັນປຸຖຸຊົນ

[໑໐] ບຸກຄົນຜູ້ເປັນໂຄຕະຣະພູ ເປັນແນວໃດ?

ການກ້າວລົງສູ່ອະຣິຍະທຳມີໃນລຳດັບແຫ່ງສະພາວະທຳເຫຼົ່າໃດ ບຸກຄົນຜູ້ປະກອບດ້ວຍສະພາວະທຳເຫຼົ່ານັ້ນ ບຸກຄົນນີ້ຮຽກວ່າ ຜູ້ເປັນໂຄຕະຣະພູ

[໑໑] ບຸກຄົນຜູ້ເປັນພະຍູປະຣະຕະ ເປັນແນວໃດ?

ພຣະເສຂະ ໗ ຈຳພວກແລະປຸຖຸຊົນຜູ້ມີສິນຊື່ວ່າ ຜູ້ເປັນພະຍູປະຣະຕະ ພຣະອະຣະຫັນຊື່ວ່າ ຜູ້ເປັນອະພະຍູປະຣະຕະ

[໑໒] ບຸກຄົນຜູ້ເປັນອະພັບພາກະມະນະ ເປັນແນວໃດ?

ບຸກຄົນຜູ້ປະກອບດ້ວຍເຄື່ອງກັ້ນຄືກຳ ເຄື່ອງກັ້ນຄືກິເລດ ເຄື່ອງກັ້ນຄືວິບາກເປັນຜູ້ບໍ່ມີສັດທາ ບໍ່ມີສັນທະ ມີປັນຍາຊາມ ໂງ່ຈ້າ ບໍ່ຄວນຢັ່ງລົງສູ່ນິຍາມທີ່ຖືກຕ້ອງໃນກຸສົນທຳທັງຫຼາຍ ບຸກຄົນເຫຼົ່ານີ້ຮຽກວ່າ ຜູ້ເປັນອະພັບພາຄະມະນະ

[໑໓] ບຸກຄົນຜູ້ເປັນພັບພາຄະມະນະ ເປັນແນວໃດ?

ບຸກຄົນຜູ້ບໍ່ປະກອບດ້ວຍເຄື່ອງກັ້ນຄືກຳ ເຄື່ອງກັ້ນຄືກິເລດ ເຄື່ອງກັ້ນຄືວິບາກເປັນຜູ້ມີສັດທາ ມີສັນທະ ມີປັນຍາ ບໍ່ໂງ່ຈ້າ ຄວນຢັ່ງລົງສູ່ນິຍາມທີ່ຖືກຕ້ອງໃນກຸສົນທຳທັງຫຼາຍ ບຸກຄົນເຫຼົ່ານີ້ຮຽກວ່າ ຜູ້ເປັນພັບພາຄະມະນະ

[໑໔] ບຸກຄົນຜູ້ເປັນນິຍະຕະ ເປັນແນວໃດ?

ບຸກຄົນຜູ້ກະທຳອະນັນຕະຣິຍະກຳ ໕ ຈຳພວກ ບຸກຄົນຜູ້ເປັນນິຍະຕະມິດສາທິດຖິ ແລະ ພຣະອະຣິຍະບຸກຄົນ ໗ ຈຳພວກຊື່ວ່າຜູ້ເປັນນິຍະຕະ ບຸກຄົນທີ່ເຫຼືອຊື່ວ່າຜູ້ເປັນອະນິຍະຕະ

[໑໕] ບຸກຄົນຜູ້ເປັນປະຕິປັນນະກະ ເປັນແນວໃດ?

ບຸກຄົນຜູ້ພ້ອມພຽງດ້ວຍມັກ ໔ ຈຳພວກ ຊື່ວ່າຜູ້ເປັນປະຕິປັນນະກະ ບຸກຄົນຜູ້ພ້ອມພຽງດ້ວຍຜົນ ໔ ຈຳພວກຊື່ວ່າຜູ້ເປັນຜະເລຖິຕະ

[໑໖] ບຸກຄົນຜູ້ເປັນສະມະສີສີ ເປັນແນວໃດ?

ຄວາມສິ້ນອາສະວະ ແລະຄວາມສິ້ນຊີວິດຂອງບຸກຄົນໃດບໍ່ກ່ອນບໍ່ຫຼັງ ບຸກຄົນນີ້ຮຽກວ່າຜູ້ເປັນສະມະສີສີ

[໑໗] ບຸກຄົນຜູ້ເປັນຖິຕະກັບປີ ເປັນແນວໃດ?

ບຸກຄົນນີ້ເປັນຜູ້ປະຕິບັດເພື່ອເຮັດໃຫ້ແຈ້ງໂສດາປັດຕິຜົນ ແລະເປັນເວລາທີ່ກັບຖືກໄຟ ໄໝ້ ກັບບໍ່ເພິ່ງຖືກໄຟໄໝ້ຕາບເທົ່າທີ່ບຸກຄົນນີ້ຍັງບໍ່ເຮັດໃຫ້ແຈ້ງໂສດາປັດຕິຜົນ ບຸກຄົນນີ້ຮຽກວ່າຜູ້ເປັນຖິຕະກັບປີ ບຸກຄົນຜູ້ພ້ອມພຽງດ້ວຍມັກແມ່ນທັງໝົດຊື່ວ່າ ຜູ້ເປັນຖິຕະກັບປີ

[໑໘] ບຸກຄົນຜູ້ເປັນອະຣິຍະ ເປັນແນວໃດ?

ພຣະອະຣິຍະບຸກຄົນ ໘ ຈຳພວກຊື່ວ່າ ຜູ້ເປັນອະຣິຍະ ບຸກຄົນທີ່ເຫຼືອຊື່ວ່າ ຜູ້ເປັນອະນະຣິຍະ

[໑໙] ບຸກຄົນຜູ້ເປັນເສຂະ ເປັນແນວໃດ?

ບຸກຄົນເປັນຜູ້ພ້ອມພຽງດ້ວຍມັກ ໔ ຈຳພວກ ບຸກຄົນເປັນຜູ້ພ້ອມພຽງດ້ວຍຜົນ ໓ ຈຳພວກຊື່ວ່າຜູ້ເປັນເສຂະ ພຣະອະຣະຫັນຊື່ວ່າຜູ້ເປັນອະເສຂະ ບຸກຄົນທີ່ເຫຼືອຊື່ວ່າ ຜູ້ເປັນເນວະເສຂານາເສຂະ

[໒໐] ບຸກຄົນຜູ້ເປັນເຕວິດຊະ ເປັນແນວໃດ?

ບຸກຄົນຜູ້ປະກອບດ້ວຍວິດຊາ ໓ ຊື່ວ່າຜູ້ເປັນເຕວິດຊະ

[໒໑] ບຸກຄົນຜູ້ເປັນສະລະພິນຍະ ເປັນແນວໃດ?

ບຸກຄົນຜູ້ປະກອບດ້ວຍອະພິນຍາ ໖ ຊື່ວ່າຜູ້ເປັນສະລະພິນຍະ

[໒໒] ບຸກຄົນຜູ້ເປັນສຳມາສຳພຸດທະ ເປັນແນວໃດ?

ບຸກຄົນບາງຄົນໃນໂລກນີ້ຕັດສະຣູ້ສັດຈະ ໔ ດ້ວຍຕົນເອງໃນທຳທີ່ບໍ່ເຄີຍສະດັບມາກ່ອນ ບັນລຸຄວາມເປັນສັບພັນຍູໃນທຳຄືສັດຈະ ໔ ນັ້ນ ແລະເຖິງຄວາມຊຳນານໃນທົດສະພົນຍານ ບຸກຄົນນີ້ຮຽກວ່າ ຜູ້ເປັນສຳມາສຳພຸດທະ

[໔໓] ບຸກຄົນຜູ້ເປັນປັດເຈກະພຸດທະ ເປັນແນວໃດ?

ບຸກຄົນບາງຄົນໃນໂລກນີ້ຕັດສະຣູ້ສັດຈະ ໔ ດ້ວຍຕົນເອງໃນທຳທີ່ບໍ່ເຄີຍສະດັບມາກ່ອນ ແຕ່ບໍ່ບັນລຸຄວາມເປັນສັບພັນຍູໃນທຳຄື ສັດຈະ ໔ ນັ້ນ ແລະບໍ່ເຖິງຄວາມຊຳນານໃນ ທົດສະພົນຍານ ບຸກຄົນນີ້ຮຽກວ່າ ຜູ້ເປັນປັດເຈກະພຸດທະ

[໔໔] ບຸກຄົນຜູ້ເປັນອຸພະໂຕພາຄະວິມຸດຕະ ເປັນແນວໃດ?

ບຸກຄົນບາງຄົນໃນໂລກນີ້ສຳຜັດວິໂມກ ໘ ດ້ວຍກາຍຢູ່ແລະອາສະວະທັງຫຼາຍຂອງເຂົາຍ່ອມສິ້ນໄປຍ້ອນເຫັນດ້ວຍປັນຍາ ບຸກຄົນນີ້ຮຽກວ່າ ຜູ້ເປັນອຸພະໂຕພາຄະວິມຸດຕະ

[໔໕] ບຸກຄົນຜູ້ເປັນປັນຍາວິມຸດຕະ ເປັນແນວໃດ?

ບຸກຄົນບາງຄົນໃນໂລກນີ້ບໍ່ໄດ້ສຳຜັດວິໂມກ ໘ ດ້ວຍກາຍຢູ່ ແຕ່ອາສະວະທັງຫຼາຍຂອງເຂົາຍ່ອມສິ້ນໄປຍ້ອນເຫັນດ້ວຍປັນຍາ ບຸກຄົນນີ້ຮຽກວ່າ ຜູ້ເປັນປັນຍາວິມຸດຕະ

[໔໖] ບຸກຄົນຜູ້ເປັນກາຍະສັກຂີ ເປັນແນວໃດ?

ບຸກຄົນບາງຄົນໃນໂລກນີ້ສຳຜັດວິໂມກ ໘ ດ້ວຍກາຍຢູ່ ແລະອາສະວະທັງຫຼາຍຂອງເຂົາຍ່ອມສິ້ນໄປຍ້ອນເຫັນດ້ວຍປັນຍາ ບຸກຄົນນີ້ຮຽກວ່າ ຜູ້ເປັນກາຍະສັກຂີ

[໔໗] ບຸກຄົນຜູ້ເປັນທິດຖິປັດຕະ ເປັນແນວໃດ?

ບຸກຄົນບາງຄົນໃນໂລກນີ້ຮູ້ຊັດແຈ້ງຕາມຄວາມເປັນຈິງວ່າ ນີ້ທຸກ ນີ້ເຫດເກີດແຫ່ງທຸກ ນີ້ຄວາມດັບທຸກ ນີ້ຂໍ້ປະຕິບັດໃຫ້ເຖິງຄວາມດັບທຸກ ອັນໜຶ່ງ ສະພາວະທຳທີ່ພຣະຕະຖາຄົດເຈົ້າປະກາດແລ້ວ ເປັນອັນເຂົາເຫັນຊັດແຈ້ງແລ້ວ ປະພຶດດີແລ້ວດ້ວຍປັນຍາ ແລະອາສະວະບາງຢ່າງຂອງເຂົາຍ່ອມສິ້ນໄປຍ້ອນເຫັນດ້ວຍປັນຍາ ບຸກຄົນນີ້ຮຽກວ່າ ຜູ້ເປັນທິດຖິປັດຕະ

[໔໘] ບຸກຄົນຜູ້ເປັນສັດທາວິມຸດຕະ ເປັນແນວໃດ?

ບຸກຄົນບາງຄົນໃນໂລກນີ້ຮູ້ຊັດແຈ້ງຕາມຄວາມເປັນຈິງວ່າ ນີ້ທຸກ ນີ້ເຫດເກີດແຫ່ງທຸກ ນີ້ຄວາມດັບທຸກ ນີ້ຂໍ້ປະຕິບັດໃຫ້ເຖິງຄວາມດັບທຸກ ອັນໜຶ່ງ ສະພາວະທຳທີ່ພຣະຕະຖາຄົດປະກາດແລ້ວເປັນອັນເຂົາເຫັນຊັດແຈ້ງແລ້ວ ປະພຶດດີແລ້ວດ້ວຍປັນຍາ ແລະອາສະວະບາງຢ່າງຂອງເຂົາຍ່ອມສິ້ນໄປຍ້ອນເຫັນດ້ວຍປັນຍາ ແຕ່ບໍ່ເໝືອນຜູ້ຊື່ວ່າທິດຖິປັດຕະ ບຸກຄົນນີ້ຮຽກວ່າ ຜູ້ເປັນສັດທາວິມຸດຕະ

[໔໙] ບຸກຄົນຜູ້ເປັນທຳມານຸສາຣີ ເປັນແນວໃດ?

ປັນຍິນຊີຂອງບຸກຄົນໃດຜູ້ປະຕິບັດເພື່ອເຮັດໃຫ້ແຈ້ງ ໂສດາປັດຕິຜົນມີປະມານຍິ່ງ ບຸກຄົນນັ້ນຍ່ອມຈະເລີນອະຣິຍະມັກອັນມີປັນຍາເປັນຕົວນຳ ມີປັນຍາເປັນປະທານ ບຸກຄົນນີ້ຮຽກວ່າ

ຜູ້ເປັນທຳມານຸສາຣີ ບຸກຄົນຜູ້ປະຕິບັດເພື່ອເຮັດໃຫ້ແຈ້ງໂສດາປັດຕິຜົນຊື່ວ່າ ຜູ້ເປັນທຳມານຸສາຣີ ບຸກຄົນຜູ້ຕັ້ງຢູ່ໃນຜົນຊື່ວ່າ ຜູ້ເປັນທິດຖິປັດຕະ

[໕໐] ບຸກຄົນຜູ້ເປັນສັດທານຸສາຣີ ເປັນແນວໃດ?

ສັດທິນຊີຂອງບຸກຄົນໃດຜູ້ປະຕິບັດ ເພື່ອເຮັດໃຫ້ແຈ້ງໂສດາປັດຕິຜົນມີປະມານຍິ່ງ ບຸກຄົນນັ້ນຍ່ອມຈະເລີນອະຣິຍະມັກອັນມີສັດທາເປັນຕົວນຳ ມີສັດທາເປັນປະທານ ບຸກຄົນນີ້ຮຽກວ່າ ຜູ້ເປັນສັດທານຸສາຣີ ບຸກຄົນຜູ້ປະຕິບັດເພື່ອເຮັດໃຫ້ແຈ້ງໂສດາປັດຕິຜົນຊື່ວ່າ ຜູ້ເປັນສັດທານຸສາຣີ ບຸກຄົນຜູ້ຕັ້ງຢູ່ໃນຜົນຊື່ວ່າ ຜູ້ເປັນສັດທາວິມຸດຕະ

[໕໑] ບຸກຄົນຜູ້ເປັນສັດຕັກຂັດຕຸປະຣະມະ ເປັນແນວໃດ?

ບຸກຄົນບາງຄົນໃນໂລກນີ້ ຍ້ອນສັງໂຍດ ໓ ປະການສິ້ນໄປ ເປັນໂສດາບັນບໍ່ມີທາງຕົກຕ່ຳ ມີຄວາມແນ່ນອນທີ່ຈະສຳເລັດສຳໂພທິໃນວັນຂ້າງໜ້າ ບຸກຄົນນັ້ນທ່ອງທ່ຽວໄປໃນເທວະໂລກ ແລະມະນຸດໂລກ ໗ ຊາດແລ້ວຈຶ່ງຈະກທຳບ່ອນສຸດແຫ່ງທຸກໄດ້ ບຸກຄົນນີ້ຮຽກວ່າ ຜູ້ເປັນສັດຕັກຂັດຕຸປະຣະມະ

[໕໒] ບຸກຄົນຜູ້ເປັນໂກລັງໂກລະ ເປັນແນວໃດ?

ບຸກຄົນບາງຄົນໃນໂລກນີ້ ຍ້ອນສັງໂຍດ ໓ ປະການສິ້ນໄປ ເປັນໂສດາບັນບໍ່ມີທາງຕົກຕ່ຳ ມີຄວາມແນ່ນອນທີ່ຈະສຳເລັດສຳໂພທິໃນວັນຂ້າງໜ້າ ບຸກຄົນນັ້ນທ່ອງທ່ຽວໄປ ໒ ຫຼື ໓ ຕະກູນແລ້ວຈຶ່ງຈະກະທຳບ່ອນສຸດແຫ່ງທຸກໄດ້ ບຸກຄົນນີ້ຮຽກວ່າຜູ້ເປັນໂກລັງໂກລະ

[໕໓] ບຸກຄົນຜູ້ເປັນເອກະພິຊີ ເປັນແນວໃດ?

ບຸກຄົນບາງຄົນໃນໂລກນີ້ ຍ້ອນສັງໂຍດ ໓ ປະການສິ້ນໄປ ເປັນໂສດາບັນບໍ່ມີທາງຕົກຕ່ຳ ມີຄວາມແນ່ນອນທີ່ຈະສຳເລັດສຳໂພທິໃນວັນຂ້າງໜ້າ ບຸກຄົນນັ້ນເກີດເປັນມະນຸດ ພົບດຽວເທົ່ານັ້ນກໍຈະກະທຳບ່ອນສຸດແຫ່ງທຸກໄດ້ ບຸກຄົນນີ້ຮຽກວ່າ ຜູ້ເປັນເອກະພິຊີ

[໕໔] ບຸກຄົນຜູ້ເປັນສະກະທາຄາມີ ເປັນແນວໃດ?

ບຸກຄົນບາງຄົນໃນໂລກນີ້ ຍ້ອນສັງໂຍດ ໓ ປະການສິ້ນໄປ ແລະຍ້ອນເຮັດຣາຄະ ໂທສະ ແລະໂມຫະໃຫ້ເບົາບາງ ເປັນສະກະທາຄາມີ ມາສູ່ໂລກນີ້ອີກພຽງເທື່ອດຽວເທົ່ານັ້ນກໍຈະກະທຳບ່ອນສຸດແຫ່ງທຸກໄດ້ ບຸກຄົນນີ້ຮຽກວ່າ ຜູ້ເປັນສະກະທາຄາມີ

[໕໕] ບຸກຄົນຜູ້ເປັນອະນາຄາມີ ເປັນແນວໃດ?

ບຸກຄົນບາງຄົນໃນໂລກນີ້ ຍ້ອນສັງໂຍດເບື້ອງຕ່ຳທັງ ໕ ປະການສິ້ນໄປເປັນໂອປະປາຕິກະ ປະຣິນິບພານໃນເທວະໂລກຊັ້ນສຸດທາວາດນັ້ນ ບໍ່ກັບມາຈາກພົບນັ້ນເປັນທຳມະດາ ບຸກຄົນນີ້ຮຽກວ່າ ຜູ້ເປັນອະນາຄາມີ

[໓໖] ບຸກຄົນຜູ້ເປັນອັນຕະຣາປະຣິນິບພາຍີ ເປັນແນວໃດ?

ບຸກຄົນບາງຄົນໃນໂລກນີ້ ຍ້ອນສັງໂຍດເບື້ອງຕ່ຳທັງ ໕ ປະການສິ້ນໄປ ເປັນໂອປະປາຕິກະ ປະຣິນິບພານໃນຊັ້ນສຸດທາວາດນັ້ນ ບໍ່ກັບມາຈາກພົບນັ້ນເປັນທຳມະດາ ບຸກຄົນນັ້ນຍັງອະຣິຍະມັກໃຫ້ເກີດຂຶ້ນເພື່ອລະສັງໂຍດເບື້ອງສູງໃນລຳດັບທີ່ເກີດແດ່ ຍັງບໍ່ເຖິງທ່າມກາງປະມານອາຍຸແດ່ ບຸກຄົນນີ້ຮຽກວ່າ ຜູ້ເປັນອັນຕະຣາປະຣິນິບພາຍີ

[໓໗] ບຸກຄົນຜູ້ເປັນອຸປະຫັດຈະປະຣິນິບພາຍີ ເປັນແນວໃດ?

ບຸກຄົນບາງຄົນໃນໂລກນີ້ ຍ້ອນສັງໂຍດເບື້ອງຕ່ຳທັງ ໕ ປະການສິ້ນໄປ ເປັນໂອປະປາຕິກະ ປະຣິນິບພານໃນຊັ້ນສຸດທາວາດນັ້ນ ບໍ່ກັບມາຈາກພົບນັ້ນເປັນທຳມະດາ ບຸກຄົນນັ້ນຍັງອະຣິຍະມັກໃຫ້ເກີດຂຶ້ນເພື່ອລະສັງໂຍດເບື້ອງສູງ ກ້າວລ່ວງທ່າມກາງປະມານອາຍຸແດ່ ໃກ້ຈະທຳກາລະກິຣິຍາແດ່ ບຸກຄົນນີ້ຮຽກວ່າ ຜູ້ເປັນອຸປະຫັດຈະປະຣິນິບພາຍີ

[໓໘] ບຸກຄົນຜູ້ເປັນອະສັງຂາຣະປະຣິນິບພາຍີ ເປັນແນວໃດ?

ບຸກຄົນບາງຄົນໃນໂລກນີ້ ຍ້ອນສັງໂຍດເບື້ອງຕ່ຳທັງ ໕ ປະການສິ້ນໄປ ເປັນໂອປະປາຕິກະ ປະຣິນິບພານໃນຊັ້ນສຸດທາວາດນັ້ນ ບໍ່ກັບມາຈາກພົບນັ້ນເປັນທຳມະດາ ບຸກຄົນນັ້ນຍັງອະຣິຍະມັກໃຫ້ເກີດຂຶ້ນໂດຍບໍ່ຕ້ອງໃຊ້ຄວາມພະຍາຍາມຫຼາຍ ເພື່ອລະສັງໂຍດເບື້ອງສູງ ບຸກຄົນນີ້ຮຽກວ່າ ຜູ້ເປັນອະສັງຂາຣະປະຣິນິບພາຍີ

[໓໙] ບຸກຄົນຜູ້ເປັນສະສັງຂາຣະປະຣິນິບພາຍີ ເປັນແນວໃດ?

ບຸກຄົນບາງຄົນໃນໂລກນີ້ ຍ້ອນສັງໂຍດເບື້ອງຕ່ຳທັງ ໕ ປະການສິ້ນໄປ ເປັນໂອປະປາຕິກະ ປະຣິນິບພານໃນຊັ້ນສຸດທາວາດນັ້ນ ບໍ່ກັບມາຈາກພົບນັ້ນເປັນທຳມະດາ ບຸກຄົນນັ້ນຍັງອະຣິຍະມັກໃຫ້ເກີດຂຶ້ນໂດຍຕ້ອງໃຊ້ຄວາມພະຍາຍາມຫຼາຍ ເພື່ອລະສັງໂຍດເບື້ອງສູງ ບຸກຄົນນີ້ຮຽກວ່າ ຜູ້ເປັນສະສັງຂາຣະປະຣິນິບພາຍີ

[໔໐] ບຸກຄົນຜູ້ເປັນອຸດທັງໂສໂຕອະກະນິດຖະຄາມີ ເປັນແນວໃດ?

ບຸກຄົນບາງຄົນໃນໂລກນີ້ ຍ້ອນສັງໂຍດເບື້ອງຕ່ຳທັງ ໕ ປະການສິ້ນໄປເປັນໂອປະປາຕິກະ ປະຣິນິບພານໃນຊັ້ນສຸດທາວາດນັ້ນ ບໍ່ກັບມາຈາກພົບນັ້ນເປັນທຳມະດາ ບຸກຄົນນັ້ນຈຸດຕິຈາກອະວິຫາພົບແລ້ວໄປສູ່ຊັ້ນອະຕັບປາພົບ ຈຸດຕິຈາກຊັ້ນອະຕັບປາພົບແລ້ວໄປສູ່ຊັ້ນສຸທັດສາພົບ ຈຸດຕິຈາກຊັ້ນສຸທັດສາພົບແລ້ວໄປສູ່ຊັ້ນສຸທັດສີພົບ ຈຸດຕິຈາກຊັ້ນສຸທັດສີພົບແລ້ວໄປສູ່ຊັ້ນອະກະນິດຖະພົບ ຍັງອະຣິຍະມັກໃຫ້ເກີດຂຶ້ນໃນຊັ້ນອະກະນິດຖະພົບ ເພື່ອລະສັງໂຍດເບື້ອງສູງ ບຸກຄົນນີ້ຮຽກວ່າ ອຸດທັງໂສໂຕອະກະນິດຖະຄາມີ

[໔໑] ບຸກຄົນຜູ້ເປັນໂສດາບັນ ແລະບຸກຄົນຜູ້ປະຕິບັດເພື່ອເຮັດໃຫ້ແຈ້ງໂສດາປັດຕິຜົນ ເປັນແນວໃດ?

ບຸກຄົນຜູ້ປະຕິບັດເພື່ອລະສັງໂຍດ ໓ ຊື່ວ່າຜູ້ປະຕິບັດເພື່ອເຮັດໃຫ້ແຈ້ງໂສດາປັດຕິຜົນ ບຸກຄົນໃດລະສັງໂຍດ ໓ ໄດ້ແລ້ວບຸກຄົນນັ້ນຮຽກວ່າຜູ້ເປັນໂສດາບັນ

[໔໔] ບຸກຄົນຜູ້ປະຕິບັດເພື່ອກະທຳການຣາຄະ ແລະພະຍາບາດໃຫ້ເບົາບາງຊື່ວ່າຜູ້ປະຕິບັດເພື່ອເຮັດໃຫ້ແຈ້ງສະກະທາຄາມິຜົນ ບຸກຄົນໃດກະທຳການຣາຄະແລະພະຍາບາດໃຫ້ເບົາບາງ ບຸກຄົນນີ້ຮຽກວ່າ ຜູ້ເປັນສະກະທາຄາມີ

[໔໓] ບຸກຄົນຜູ້ປະຕິບັດເພື່ອລະການຣາຄະ ແລະພະຍາບາດໂດຍບໍ່ເຫຼືອຊື່ວ່າຜູ້ປະຕິບັດເພື່ອເຮັດໃຫ້ແຈ້ງອະນາຄາມິຜົນ ບຸກຄົນໃດລະການຣາຄະ ແລະພະຍາບາດໄດ້ໂດຍບໍ່ເຫຼືອ ບຸກຄົນນີ້ຮຽກວ່າ ຜູ້ເປັນອະນາຄາມີ

[໔໔] ບຸກຄົນຜູ້ປະຕິບັດເພື່ອລະຣູປະຣາຄະ ອະຣູປະຣາຄະ ມານະ ອຸດທັດຈະ ແລະອະວິດຊາ ໂດຍບໍ່ເຫຼືອຊື່ວ່າຜູ້ປະຕິບັດເພື່ອເຮັດໃຫ້ແຈ້ງອະຣະຫັດຕະຜົນ ບຸກຄົນໃດລະຣູປະຣາຄະ ອະຣູປະຣາຄະ ມານະ ອຸດທັດຈະ ແລະອະວິດຊາໄດ້ໂດຍບໍ່ເຫຼືອ ບຸກຄົນນີ້ຮຽກວ່າ ຜູ້ເປັນອະຣະຫັນ

**ເອກກະນິດເທດ ຈົບ**

## ໔. ທຸກະປຸກຄະລະບັນຍັດ

[໔໕] ບຸກຄົນຜູ້ມັກໂກດ ເປັນແນວໃດ? ໃນຂໍ້ນັ້ນ ຄວາມໂກດ ເປັນແນວໃດ?

ຄວາມໂກດ ກິຣິຍາທີ່ໂກດ ພາວະທີ່ໂກດ ຄວາມຄິດປະທຸດສະຮ້າຍ ກິຣິຍາທີ່ຄິດປະທຸດສະຮ້າຍ ພາວະທີ່ຄິດປະທຸດສະຮ້າຍ ຄວາມຄິດປອງຮ້າຍ ກິຣິຍາທີ່ຄິດປອງຮ້າຍ ພາວະທີ່ຄິດປອງຮ້າຍ ຄວາມພິໂຣດ ຄວາມພິໂຣດຕອບ ຄວາມດຸຮ້າຍ ຄວາມຮຸນແຮງ ຄວາມທີ່ຈິດບໍ່ເບີກບານ ນີ້ຮຽກວ່າ ຄວາມໂກດ ບຸກຄົນໃດຍັງລະຄວາມໂກດນີ້ບໍ່ໄດ້ ບຸກຄົນນີ້ຮຽກວ່າຜູ້ມັກໂກດ

[໔໖] ບຸກຄົນຜູ້ຜູກໂກດ ເປັນແນວໃດ? ໃນຂໍ້ນັ້ນ ຄວາມຜູກໂກດ ເປັນແນວໃດ?

ຄວາມໂກດໃນເບື້ອງຕົ້ນຊື່ວ່າຄວາມໂກດ ຄວາມໂກດໃນເວລາຕໍ່ມາຊື່ວ່າຄວາມຜູກໂກດ ຄວາມຜູກໂກດ ກິຣິຍາທີ່ຜູກໂກດ ພາວະທີ່ຜູກໂກດ ຄວາມບໍ່ຢຸດໂກດ ການຕັ້ງຄວາມໂກດໄວ້ ການດຳຣົງຄວາມໂກດໄວ້ ການເວີນລົງໄປຕາມຄວາມໂກດ ການຕາມຜູກຄວາມໂກດໄວ້ ການກະທຳຄວາມໂກດໃຫ້ໝັ້ນ ນີ້ຮຽກວ່າ ຄວາມຜູກໂກດ ບຸກຄົນໃດຍັງລະຄວາມຜູກໂກດບໍ່ໄດ້ບຸກຄົນນີ້ຮຽກວ່າຜູ້ຜູກໂກດ

[໔໗] ບຸກຄົນຜູ້ມັກລົບຫຼູ່ ເປັນແນວໃດ? ໃນຂໍ້ນັ້ນ ຄວາມລົບຫຼູ່ ເປັນແນວໃດ?

ຄວາມລົບຫຼູ່ ກິຣິຍາທີ່ລົບຫຼູ່ ພາວະທີ່ລົບຫຼູ່ ຄວາມດູໝິ່ນ ການກະທຳຄວາມດູໝິ່ນ ນີ້ຮຽກວ່າ ຄວາມລົບຫຼູ່ ບຸກຄົນໃດຍັງລະຄວາມລົບຫຼູ່ນີ້ບໍ່ໄດ້ ບຸກຄົນນີ້ຮຽກວ່າ ຜູ້ມັກລົບຫຼູ່

[໔໗] ບຸກຄົນຜູ້ຕີສະເໝີ ເປັນແນວໃດ? ໃນຂໍ້ນັ້ນ ຄວາມຕີສະເໝີ ເປັນແນວໃດ?

ຄວາມຕີສະເໝີ ກິຣິຍາທີ່ຕີສະເໝີ ພາວະທີ່ຕີສະເໝີ ສະພາວະທຳທີ່ເປັນອາຫານແຫ່ງຄວາມຕີສະເໝີໂດຍນຳເອົາໄຊຊະນະຂອງຕົນມາອ້າງເຫດແຫ່ງຄວາມວິວາທະ ຄວາມແຂ່ງດີ ຄວາມບໍ່ຍອມສະລະ ນີ້ຮຽກວ່າ ຄວາມຕີສະເໝີ ບຸກຄົນໃດຍັງລະຄວາມຕີສະເໝີນີ້ບໍ່ໄດ້ ບຸກຄົນນີ້ຮຽກວ່າ ຜູ້ຕີສະເໝີ

[໔໙] ບຸກຄົນຜູ້ມີຄວາມຣິດສະຫຍາ ເປັນແນວໃດ? ໃນຂໍ້ນັ້ນ ຄວາມຣິດສະຫຍາ ເປັນແນວໃດ?

ຄວາມຣິດສະຫຍາ ກິຣິຍາທີ່ຣິດສະຫຍາ ພາວະທີ່ຣິດສະຫຍາ ຄວາມກຽດຊັງ ກິຣິຍາທີ່ກຽດຊັງ ພາວະທີ່ກຽດຊັງໃນເມື່ອຜູ້ອື່ນໄດ້ລາບ ສັກກາຣະ ຄວາມເຄົາລົບ ຄວາມນັບຖື ການຂາບໄຫວ້ ແລະການບູຊາ ນີ້ຮຽກວ່າ ຄວາມຣິດສະຫຍາ ບຸກຄົນໃດຍັງລະຄວາມຣິດສະຫຍານີ້ບໍ່ໄດ້ ບຸກຄົນນີ້ຮຽກວ່າ ຜູ້ມີຄວາມຣິດສະຫຍາ

[໕໐] ບຸກຄົນຜູ້ມີຄວາມຂີ້ຖີ່ ເປັນແນວໃດ? ໃນຂໍ້ນັ້ນ ຄວາມຂີ້ຖີ່ ເປັນແນວໃດ?

ຄວາມຂີ້ຖີ່ ໕ ຢ່າງ ຄື

໑. ຄວາມຂີ້ຖີ່ບ່ອນຢູ່
໒. ຄວາມຂີ້ຖີ່ຕະກູນ
໓. ຄວາມຂີ້ຖີ່ລາບ
໔. ຄວາມຂີ້ຖີ່ວັນນະ
໕. ຄວາມຂີ້ຖີ່ທຳ

ຄວາມຂີ້ຖີ່ ກິຣິຍາທີ່ຂີ້ຖີ່ ພາວະທີ່ຂີ້ຖີ່ ຄວາມຫວງແຫນ ຄວາມໜຽວແໜ້ນ ຄວາມປົກປິດ ຄວາມມີຈິດບໍ່ເຜື່ອແຜ່ ນີ້ຮຽກວ່າ ຄວາມຂີ້ຖີ່ ບຸກຄົນໃດຍັງລະຄວາມຂີ້ຖີ່ນີ້ບໍ່ໄດ້ ບຸກຄົນນີ້ຮຽກວ່າ ຜູ້ມີຄວາມຂີ້ຖີ່

[໕໑] ບຸກຄົນຜູ້ໂອ້ອວດ ເປັນແນວໃດ? ໃນຂໍ້ນັ້ນ ຄວາມໂອ້ອວດ ເປັນແນວໃດ?

ບຸກຄົນບາງຄົນໃນໂລກນີ້ເປັນຜູ້ໂອ້ອວດ ເປັນຜູ້ໂອ້ອວດໂພດ ຄວາມໂອ້ອວດ ກິຣິຍາທີ່ໂອ້ອວດ ພາວະທີ່ໂອ້ອວດ ພາວະທີ່ແຂງກະດ້າງ ກິຣິຍາທີ່ແຂງກະດ້າງ ການເວົ້າມີເລ້ຫຼ່ຽມ ກິຣິຍາທີ່ເວົ້າແອບອ້າງ ນີ້ຮຽກວ່າ ຄວາມໂອ້ອວດ ບຸກຄົນໃດຍັງລະຄວາມໂອ້ອວດນີ້ບໍ່ໄດ້ ບຸກຄົນນີ້ຮຽກວ່າ ຜູ້ໂອ້ອວດ

[໕໒] ບຸກຄົນຜູ້ມີມາຍາ ເປັນແນວໃດ? ໃນຂໍ້ນັ້ນ ມາຍາ ເປັນແນວໃດ?

ບຸກຄົນບາງຄົນໃນໂລກນີ້ປະພຶດກາຍທຸດຈະຣິດ ວະຈີທຸດຈະຣິດ ມະໂນທຸດຈະຣິດ ຍ້ອນເຫດຈະ ປົກປິດທຸດຈະຣິດນັ້ນຈຶ່ງຕັ້ງຄວາມປາຖະໜາອັນຊົ່ວຊາມ ປາຖະໜາວ່າ “ໃຜ ໆ ຢ່າຮູ້

ຈັກເຮົາ” ດຳຣິວ່າ “ໃຜ ໆ ຢ່າຮູ້ຈັກເຮົາ” ກ່າວວ່າ “ໃຜ ໆ ຢ່າຮູ້ຈັກເຮົາ” ພະຍາຍາມທາງກາຍວ່າ “ໃຜ ໆ ຢ່າຮູ້ຈັກເຮົາ” ຄວາມເຈົ້າເລ້ ຄວາມເປັນຄົນເຈົ້າເລ້ ກິຣິຍາທີ່ຫຼອກໃຫ້ຫຼົງ ຄວາມຫຼອກລວງ ຄວາມໂກງ ຄວາມປົກປິດ ຄວາມຫຼີກລ່ຽງ ຄວາມເຊື່ອງ ຄວາມເຊື່ອງໄວ້ ຄວາມປິດບັງ ຄວາມປົກປິດ ການບໍ່ເຮັດໃຫ້ຊັດເຈນ ການບໍ່ເຮັດໃຫ້ແຈ້ງຊັດ ການປິດບັງເຊື່ອງກິຣິຍາທີ່ຊົ່ວຊາມເຊັ່ນນີ້ ນີ້ຮຽກວ່າ ມາຍາບຸກຄົນໃດຍັງລະມາຍານີ້ບໍ່ໄດ້ ບຸກຄົນນີ້ຮຽກວ່າ ຜູ້ມີມາຍາ

[໕໓] ບຸກຄົນຜູ້ບໍ່ມີຫິຣິ ເປັນແນວໃດ? ໃນຂໍ້ນັ້ນ ຄວາມບໍ່ມີຫິຣິ ເປັນແນວໃດ?

ກິຣິຍາທີ່ບໍ່ລະອາຍຕໍ່ການປະພຶດທຸດຈະຣິດທີ່ຄວນລະອາຍ ກິຣິຍາທີ່ບໍ່ລະອາຍຕໍ່ການປະກອບສະພາວະທຳທີ່ເປັນອະກຸສົນເຊິ່ງເປັນບາບ ນີ້ຮຽກວ່າ ຄວາມບໍ່ມີຫິຣິ ບຸກຄົນຜູ້ປະກອບດ້ວຍຄວາມບໍ່ມີຫິຣິນີ້ຊື່ວ່າ ຜູ້ບໍ່ມີຫິຣິ

[໕໔] ບຸກຄົນຜູ້ບໍ່ມີໂອດຕັບປະ ເປັນແນວໃດ? ໃນຂໍ້ນັ້ນ ຄວາມບໍ່ມີໂອດຕັບປະ ເປັນແນວໃດ?

ກິຣິຍາທີ່ບໍ່ເກງກົວຕໍ່ການປະພຶດທຸດຈະຣິດທີ່ຄວນເກງກົວ ກິຣິຍາທີ່ບໍ່ເກງກົວຕໍ່ການປະກອບສະພາວະທຳທີ່ເປັນອະກຸສົນເຊິ່ງເປັນບາບ ນີ້ຮຽກວ່າຄວາມບໍ່ມີໂອດຕັບປະບຸກຄົນຜູ້ປະກອບດ້ວຍຄວາມບໍ່ມີໂອດຕັບປະນີ້ຊື່ວ່າຜູ້ບໍ່ມີໂອດຕັບປະ

[໕໕] ບຸກຄົນຜູ້ວ່າຍາກ ເປັນແນວໃດ? ໃນຂໍ້ນັ້ນ ຄວາມເປັນຜູ້ວ່າຍາກ ເປັນແນວໃດ?

ກິຣິຍາຂອງຜູ້ວ່າຍາກ ພາວະຂອງຜູ້ວ່າຍາກ ຄວາມເປັນຜູ້ວ່າຍາກ ຄວາມຍຶດຖືຂ້າງຂັດຂືນ ຄວາມພໍໃຈການໂຕ້ແຍ້ງ ຄວາມບໍ່ເອື້ອເຟື້ອ ພາວະແຫ່ງຜູ້ບໍ່ເອື້ອເຟື້ອຄວາມບໍ່ເຄົາລົບ ແລະບໍ່ຮັບຟັງໃນເມື່ອຖືກວ່າກ່າວໂດຍຊອບ ນີ້ຮຽກວ່າ ຄວາມເປັນຜູ້ວ່າຍາກ ບຸກຄົນຜູ້ປະກອບດ້ວຍຄວາມເປັນຜູ້ວ່າຍາກ ນີ້ຊື່ວ່າ ຜູ້ວ່າຍາກ

[໕໖] ບຸກຄົນຜູ້ມີມິດຊົ່ວ ເປັນແນວໃດ? ໃນຂໍ້ນັ້ນ ຄວາມເປັນຜູ້ມີມິດຊົ່ວ ເປັນແນວໃດ?

ບຸກຄົນຜູ້ບໍ່ມີສັດທາ ທຸສິນ ສະດັບມາໜ້ອຍ ມີຄວາມຂີ້ຖີ່ ມີປັນຍາຊາມ ການເສບ ການສ້ອງເສບ ການສ້ອງເສບດ້ວຍດີ ການຄົບ ການຄົບຫາ ຄວາມພັກດີ ຄວາມຈົງຮັກພັກດີຕໍ່ບຸກຄົນເຫຼົ່ານັ້ນ ຄວາມເປັນຜູ້ມີກາຍແລະໃຈເອນອຽງໄປຕາມບຸກຄົນເຫຼົ່ານັ້ນ ນີ້ຮຽກວ່າ ຄວາມເປັນຜູ້ມີມິດຊົ່ວ ບຸກຄົນຜູ້ປະກອບດ້ວຍຄວາມເປັນຜູ້ມີມິດຊົ່ວນີ້ຊື່ວ່າ ຜູ້ມີມິດຊົ່ວ

[໕໗] ບຸກຄົນຜູ້ບໍ່ຄຸ້ມຄອງທະວານໃນອິນຊີ ເປັນແນວໃດ? ໃນຂໍ້ນັ້ນ ຄວາມເປັນຜູ້ບໍ່ຄຸ້ມຄອງທະວານໃນອິນຊີ ເປັນແນວໃດ?

ບຸກຄົນບາງຄົນໃນໂລກນີ້ເຫັນຮູບທາງຕາແລ້ວລວມຖື ແຍກຖື ຍ່ອມບໍ່ປະຕິບັດເພື່ອສັງລວມຈັກຂຸນຊີ ເຊິ່ງເມື່ອບໍ່ສັງລວມແລ້ວກໍເປັນເຫດໃຫ້ບາບອະກຸສົນທຳທັງຫຼາຍ ຄື ອະພິດຊາແລະໂທມະນັດຄອບງຳໄດ້ ຍ່ອມບໍ່ຣະວັງຈັກຂຸນຊີ ບໍ່ເຖິງຄວາມສັງລວມໃນຈັກຂຸນຊີ ຟັງສຽງ

ທາງຫູ ຯລຯ ດົມກິ່ນທາງດັງ ຯລຯ ຊີມຣົດທາງລີ້ນ ຯລຯ ຖືກຕ້ອງໂຜດຖັບພະທາງກາຍ ຯລຯ ຮູ້ທຳມາຣົມທາງໃຈ ເປັນຜູ້ລວມຖື ແຍກຖື ຍ່ອມບໍ່ປະຕິບັດເພື່ອສັງລວມຈັກຂຸນຊີ ເຊິ່ງເມື່ອບໍ່ສັງລວມແລ້ວ ກໍເປັນເຫດໃຫ້ບາບອະກຸສົນທຳທັງຫຼາຍຄື ອະພິດຊາ ແລະໂທມະນັດຄອບງຳໄດ້ ບໍ່ຣະວັງຈັກຂຸນຊີ ບໍ່ເຖິງຄວາມສັງລວມໃນຈັກຂຸນຊີ ຄວາມບໍ່ຄຸ້ມຄອງ ກິຣິຍາທີ່ບໍ່ຄຸ້ມຄອງ ຄວາມບໍ່ຮັກສາ ຄວາມບໍ່ສັງລວມອິນຊີທັງ ໖ ເຫຼົ່ານີ້ ນີ້ຮຽກວ່າ ຄວາມເປັນຜູ້ບໍ່ຄຸ້ມຄອງທະວານໃນອິນຊີ ບຸກຄົນຜູ້ປະກອບດ້ວຍຄວາມເປັນຜູ້ບໍ່ຄຸ້ມຄອງທະວານໃນອິນຊີນີ້ຊື່ວ່າຜູ້ບໍ່ຄຸ້ມຄອງທະວານໃນອິນຊີ

[໕໗] ບຸກຄົນຜູ້ບໍ່ຮູ້ຈັກປະມານໃນການບໍຣິໂພກ ເປັນແນວໃດ? ໃນຂໍ້ນັ້ນ ຄວາມເປັນຜູ້ບໍ່ຮູ້ຈັກປະມານໃນການບໍຣິໂພກ ເປັນແນວໃດ?

ບຸກຄົນບາງຄົນໃນໂລກນີ້ ບໍ່ພິຈາລະນາໂດຍແຍບຄາຍກືນກິນອາຫານເພື່ອຫຼິ້ນ ເພື່ອຄວາມມົວເມົາ ເພື່ອປະດັບ ເພື່ອຕົບແຕ່ງ ຄວາມເປັນຜູ້ບໍ່ສັນໂດດ ຄວາມເປັນຜູ້ບໍ່ຮູ້ຈັກປະມານໃນການພິຈາລະນາແລ້ວ ບໍຣິໂພກໂພຊະນາຫານນັ້ນ ນີ້ຮຽກວ່າ ຄວາມເປັນຜູ້ບໍ່ຮູ້ຈັກປະມານໃນການບໍຣິໂພກ ບຸກຄົນຜູ້ປະກອບດ້ວຍຄວາມເປັນຜູ້ບໍ່ຮູ້ຈັກປະມານໃນການບໍຣິໂພກນີ້ຊື່ວ່າ ຜູ້ບໍ່ຮູ້ຈັກປະມານໃນການບໍຣິໂພກ

[໕໙] ບຸກຄົນຜູ້ມີສະຕິຫຼົງລືມ ເປັນແນວໃດ? ໃນຂໍ້ນັ້ນ ຄວາມເປັນຜູ້ມີສະຕິຫຼົງລືມເປັນແນວໃດ?

ຄວາມຣະລຶກບໍ່ໄດ້ ຄວາມບໍ່ຕາມຣະລຶກ ຄວາມບໍ່ຫວນຣະລຶກ ຄວາມຣະລຶກບໍ່ໄດ້ ອາການທີ່ຣະລຶກບໍ່ໄດ້ ຄວາມຊົງຈຳບໍ່ໄດ້ ຄວາມເລື່ອນລອຍ ຄວາມຫຼົງລືມ ນີ້ຮຽກວ່າ ຄວາມເປັນຜູ້ມີສະຕິຫຼົງລືມ ບຸກຄົນຜູ້ປະກອບດ້ວຍຄວາມມີສະຕິຫຼົງລືມນີ້ຊື່ວ່າຜູ້ມີສະຕິຫຼົງລືມ

[໖໐] ບຸກຄົນຜູ້ບໍ່ມີສຳປະຊັນຍະ ເປັນແນວໃດ? ໃນຂໍ້ນັ້ນ ຄວາມບໍ່ມີສຳປະຊັນຍະເປັນແນວໃດ?

ຄວາມບໍ່ຮູ້ ຄວາມບໍ່ເຫັນ ຄວາມບໍ່ຕັດສະຮູ້ ຄວາມບໍ່ຮູ້ໂດຍສົມຄວນ ຄວາມບໍ່ຮູ້ຕາມຄວາມເປັນຈິງ ຄວາມບໍ່ຮູ້ແຈ້ງຕະຫຼອດ ຄວາມບໍ່ຖືເອົາໃຫ້ຖືກຕ້ອງ ຄວາມບໍ່ຢັ່ງລົງຢ່າງຮອບຄອບ ຄວາມບໍ່ພິນິດ ຄວາມບໍ່ພິຈາລະນາ ຄວາມບໍ່ເຮັດໃຫ້ປະຈັກ ຄວາມຊາມປັນຍາ ຄວາມໂງ່ຈ້າ ຄວາມບໍ່ຮູ້ຊັດແຈ້ງ ຄວາມຫຼົງ ຄວາມລຸ່ມຫຼົງ ຄວາມຫຼົງໃຫຼ ອະວິດຊາ ອະວິດໂຊຄະ ອະວິດຊາໂຍຄະ ອະວິດຊານຸໄສ ປະຣິຍຸດຖານກິເລດຄືອະວິດຊາ ລິ່ມຄືອະວິດຊາ ອະກຸສົນມູນຄືໂມຫະ ນີ້ຮຽກວ່າ ຄວາມບໍ່ມີສຳປະຊັນຍະ ບຸກຄົນຜູ້ປະກອບດ້ວຍຄວາມບໍ່ມີສຳປະຊັນຍະນີ້ຊື່ວ່າຜູ້ບໍ່ມີສຳປະຊັນຍະ

[໖໑] ບຸກຄົນຜູ້ມີສີນວິບັດ ເປັນແນວໃດ? ໃນຂໍ້ນັ້ນ ສີນວິບັດ ເປັນແນວໃດ?

ການລ່ວງລະເມີດທາງກາຍ ການລ່ວງລະເມີດທາງວາຈາ ການລ່ວງລະເມີດທັງທາງກາຍ ແລະທາງວາຈາ ນີ້ຮຽກວ່າ ສີນວິບັດ ຄວາມເປັນຜູ້ທຸສີນແມ່ນທັງໝົດຊື່ວ່າສີນວິບັດ ບຸກຄົນຜູ້ປະກອບດ້ວຍສີນວິບັດນີ້ຊື່ວ່າຜູ້ມີສີນວິບັດ

[໖໘] ບຸກຄົນຜູ້ມີທິດຖິວິບັດ ເປັນແນວໃດ? ໃນຂໍ້ນັ້ນ ທິດຖິວິບັດ ເປັນແນວໃດ?

ຄວາມເຫັນວ່າ ທານທີ່ໃຫ້ແລ້ວບໍ່ມີຜົນ ຍັນທີ່ບູຊາແລ້ວບໍ່ມີຜົນ ການບວງສວງບໍ່ມີຜົນ ຜົນວິບາກແຫ່ງກຳທີ່ເຮັດດີເຮັດຊົ່ວບໍ່ມີ ໂລກນີ້ບໍ່ມີ ໂລກໜ້າບໍ່ມີ ມານດາບໍ່ມີຄຸນ ບິດາບໍ່ມີຄຸນ ສັດທີ່ເກີດຜຸດຂຶ້ນບໍ່ມີ ສະມະນະພາມຜູ້ປະຕິບັດດີປະຕິບັດຊອບເຮັດໃຫ້ແຈ້ງໂລກນີ້ ແລະໂລກໜ້າດ້ວຍປັນຍາອັນຍິ່ງເອງແລ້ວສອນຜູ້ອື່ນໃຫ້ຮູ້ແຈ້ງບໍ່ມີໃນໂລກ ດັ່ງນີ້ ທິດຖິ ຄວາມເຫັນຜິດ ຮົກທຶບຄືທິດຖິ ກັນດານຄືທິດຖິ ຄວາມເຫັນອັນເປັນຂ້າເສິກຕໍ່ສຳມາທິດຖິ ຄວາມປັ່ນປ່ວນແຫ່ງທິດຖິ ສັງໂຍດຄືທິດຖິ ຄວາມຢຶດຖື ຄວາມຢຶດໝັ້ນ ຄວາມຖືຜິດ ທາງຊົ່ວ ທາງຜິດ ພາວະທີ່ຜິດ ລັດທິທີ່ເປັນບໍ່ເກີດແຫ່ງຄວາມພິນາດ ຄວາມຢຶດຖືໂດຍຄາດເຄື່ອນ ນີ້ຮຽກວ່າ ທິດຖິວິບັດ ມິດສາທິດຖິແມ່ນທັງໝົດຊື່ວ່າທິດຖິວິບັດ ບຸກຄົນຜູ້ປະກອບທິດຖິວິບັດນີ້ຊື່ວ່າ ຜູ້ມີທິດຖິວິບັດ

[໖໙] ບຸກຄົນຜູ້ມີສັງໂຍດໃນພາຍໃນ ເປັນແນວໃດ?

ບຸກຄົນໃດຍັງລະສັງໂຍດເບື້ອງຕ່ຳທັງ ໕ ປະການບໍ່ໄດ້ ບຸກຄົນນີ້ຮຽກວ່າ ຜູ້ມີສັງໂຍດໃນພາຍໃນ

[໖໘] ບຸກຄົນຜູ້ມີສັງໂຍດໃນພາຍນອກ ເປັນແນວໃດ?

ບຸກຄົນໃດຍັງລະສັງໂຍດເບື້ອງສູງທັງ ໕ ປະການບໍ່ໄດ້ ບຸກຄົນນີ້ຮຽກວ່າ ຜູ້ມີສັງໂຍດໃນພາຍນອກ

[໖໕] ບຸກຄົນຜູ້ບໍ່ມັກໂກດ ເປັນແນວໃດ? ໃນຂໍ້ນັ້ນ ຄວາມໂກດ ເປັນແນວໃດ?

ຄວາມໂກດ ກິຣິຍາທີ່ໂກດ ພາວະທີ່ໂກດ ຄວາມຄິດປະທຸດສະຮ້າຍ ກິຣິຍາທີ່ຄິດປະທຸດສະຮ້າຍ ພາວະທີ່ຄິດປະທຸດສະຮ້າຍ ຄວາມຄິດປອງຮ້າຍ ກິຣິຍາທີ່ຄິດປອງຮ້າຍ ພາວະທີ່ຄິດປອງຮ້າຍ ຄວາມພິໂຣດ ຄວາມພິໂຣດຕອບ ຄວາມດຸຮ້າຍ ຄວາມຮຸນແຮງ ຄວາມທີ່ຈິດບໍ່ເບີກບານ ນີ້ຮຽກວ່າ ຄວາມໂກດ ບຸກຄົນໃດລະຄວາມໂກດນີ້ໄດ້ ບຸກຄົນນີ້ຮຽກວ່າ ຜູ້ບໍ່ມັກໂກດ

[໖໖] ບຸກຄົນຜູ້ບໍ່ຜູກໂກດ ເປັນແນວໃດ? ໃນຂໍ້ນັ້ນ ຄວາມຜູກໂກດ ເປັນແນວໃດ?

ຄວາມໂກດໃນເບື້ອງຕົ້ນຊື່ວ່າຄວາມໂກດ ຄວາມໂກດໃນເວລາຕໍ່ມາຊື່ວ່າຄວາມຜູກໂກດ ຄວາມຜູກໂກດ ກິຣິຍາທີ່ຜູກໂກດ ພາວະທີ່ຜູກໂກດ ຄວາມບໍ່ຢຸດໂກດ ການຕັ້ງຄວາມໂກດໄວ້ ການດຳຣົງຄວາມໂກດໄວ້ ການເວີນລົງໄປຕາມຄວາມໂກດ ການຕາມຜູກຄວາມໂກດໄວ້ ການເຮັດຄວາມໂກດໃຫ້ໝັ້ນ ນີ້ຮຽກວ່າ ຄວາມຜູກໂກດ ບຸກຄົນໃດລະຄວາມຜູກໂກດນີ້ໄດ້ ບຸກຄົນນີ້ຮຽກວ່າ ຜູ້ບໍ່ຜູກໂກດ

[໖໗] ບຸກຄົນຜູ້ບໍ່ລົບຫຼູ່ ເປັນແນວໃດ? ໃນຂໍ້ນັ້ນ ຄວາມລົບຫຼູ່ ເປັນແນວໃດ?

ຄວາມລົບຫຼູ່ ກິຣິຍາທີ່ລົບຫຼູ່ ພາວະທີ່ລົບຫຼູ່ ຄວາມດູໝິ່ນ ການກະທຳຄວາມດູໝິ່ນ ນີ້ຮຽກວ່າ ຄວາມລົບຫຼູ່ ບຸກຄົນໃດລະຄວາມລົບຫຼູ່ນີ້ໄດ້ ບຸກຄົນນີ້ຮຽກວ່າ ຜູ້ບໍ່ລົບຫຼູ່

[໖໘] ບຸກຄົນຜູ້ບໍ່ຕີສະເໝີ ເປັນແນວໃດ? ໃນຂໍ້ນັ້ນ ຄວາມຕີສະເໝີ ເປັນແນວໃດ?

ຄວາມຕີສະເໝີ ກິຣິຍາທີ່ຕີສະເໝີ ພາວະທີ່ຕີສະເໝີ ສະພາວະທຳທີ່ເປັນອາຫານແຫ່ງຄວາມຕີສະເໝີໂດຍການນຳເອົາໄຊຊະນະຂອງຕົນມາອ້າງເຫດແຫ່ງຄວາມວິວາທະ ຄວາມແຂ່ງດີ ຄວາມບໍ່ຍອມສະລະ ນີ້ຮຽກວ່າ ຄວາມຕີສະເໝີ ບຸກຄົນໃດລະຄວາມຕີສະເໝີນີ້ໄດ້ ບຸກຄົນນີ້ຮຽກວ່າ ຜູ້ບໍ່ຕີສະເໝີ

[໖໙] ບຸກຄົນຜູ້ບໍ່ມີຄວາມຣິດສະຫຍາ ເປັນແນວໃດ? ໃນຂໍ້ນັ້ນ ຄວາມຣິດສະຫຍາ ເປັນແນວໃດ?

ຄວາມຣິດສະຫຍາ ກິຣິຍາທີ່ຣິດສະຫຍາ ພາວະທີ່ຣິດສະຫຍາ ຄວາມກຽດຊັງ ກິຣິຍາທີ່ກຽດຊັງ ພາວະທີ່ກຽດຊັງໃນເມື່ອຜູ້ອື່ນໄດ້ລາບ ສັກກາຣະ ຄວາມເຄົາລົບ ຄວາມນັບຖື ການຂາບໄຫວ້ແລະການບູຊາ ນີ້ຮຽກວ່າ ຄວາມຣິດສະຫຍາ ບຸກຄົນໃດລະຄວາມຣິດສະຫຍານີ້ໄດ້ ບຸກຄົນນີ້ຮຽກວ່າ ຜູ້ບໍ່ມີຄວາມຣິດສະຫຍາ

[໗໐] ບຸກຄົນຜູ້ບໍ່ມີຄວາມຂີ້ຖີ່ ເປັນແນວໃດ? ໃນຂໍ້ນັ້ນ ຄວາມຂີ້ຖີ່ ເປັນແນວໃດ?

ຄວາມຂີ້ຖີ່ ໕ ຢ່າງ ຄື

໑. ຄວາມຂີ້ຖີ່ບ່ອນຢູ່
໒. ຄວາມຂີ້ຖີ່ຕະກູນ
໓. ຄວາມຂີ້ຖີ່ລາບ
໔. ຄວາມຂີ້ຖີ່ວັນນະ
໕. ຄວາມຂີ້ຖີ່ທຳ

ຄວາມຂີ້ຖີ່ ກິຣິຍາທີ່ຂີ້ຖີ່ ພາວະທີ່ຂີ້ຖີ່ ຄວາມຫວງແຫນ ຄວາມໜຽວແໜ້ນ ຄວາມປົກປິດ ຄວາມມີຈິດບໍ່ເຜື່ອແຜ່ ນີ້ຮຽກວ່າ ຄວາມຂີ້ຖີ່ ບຸກຄົນໃດລະຄວາມຂີ້ຖີ່ນີ້ໄດ້ ບຸກຄົນນີ້ຮຽກວ່າ ຜູ້ບໍ່ມີຄວາມຂີ້ຖີ່

[໗໑] ບຸກຄົນຜູ້ບໍ່ໂອ້ອວດ ເປັນແນວໃດ? ໃນຂໍ້ນັ້ນ ຄວາມໂອ້ອວດ ເປັນແນວໃດ?

ບຸກຄົນບາງຄົນໃນໂລກນີ້ເປັນຜູ້ໂອ້ອວດ ເປັນຜູ້ໂອ້ອວດໂພດ ຄວາມໂອ້ອວດ ກິຣິຍາທີ່ໂອ້ອວດ ພາວະທີ່ໂອ້ອວດ ພາວະທີ່ແຂງກະດ້າງ ກິຣິຍາທີ່ແຂງກະດ້າງ ການເວົ້າເປັນຫຼຽມຄູ ກິຣິຍາທີ່ເວົ້າແອບອ້າງ ນີ້ຮຽກວ່າ ຄວາມໂອ້ອວດ ບຸກຄົນໃດລະຄວາມໂອ້ອວດນີ້ໄດ້ ບຸກຄົນນີ້ຮຽກວ່າ ຜູ້ບໍ່ໂອ້ອວດ

[໗໔] ບຸກຄົນຜູ້ບໍ່ມີມາຍາ ເປັນແນວໃດ? ໃນຂໍ້ນັ້ນ ມາຍາ ເປັນແນວໃດ?

ບຸກຄົນບາງຄົນໃນໂລກນີ້ປະພຶດກາຍທຸດຈະຣິດ ວະຈີທຸດຈະຣິດ ມະໂນທຸດຈະຣິດ ຍ້ອນເຫດຈະປົກປິດທຸດຈະຣິດນັ້ນ ຈຶ່ງຕັ້ງຄວາມປາຖະໜາອັນຊົ່ວຊາມປາຖະໜາວ່າ ໃຜ ໆ ຢ່າຮູ້ຈັກເຮົາ ດໍາຣິວ່າ ໃຜ ໆ ຢ່າຮູ້ຈັກເຮົາ ກ່າວວ່າ ໃຜ ໆ ຢ່າຮູ້ຈັກເຮົາ ພະຍາຍາມທາງກາຍວ່າ ໃຜ ໆ ຢ່າຮູ້ຈັກເຮົາ ຄວາມເຈົ້າເລ້ ຄວາມເປັນຄົນເຈົ້າເລ້ ກິຣິຍາທີ່ຫຼອກໃຫ້ຫຼົງ ຄວາມຫຼອກລວງ ຄວາມໂກງ ຄວາມປົກປິດ ຄວາມຫຼີກລ່ຽງ ຄວາມເຊື່ອງ ຄວາມເຊື່ອງໄວ້ ຄວາມປິດບັງ ຄວາມປົກປິດ ການບໍ່ເຮັດໃຫ້ຊັດເຈນ ການບໍ່ເຮັດໃຫ້ແຈ້ງຊັດ ການປິດບັງເຊື່ອງ ກິຣິຍາທີ່ຊົ່ວຊາມເຊັ່ນນີ້ ນີ້ຮຽກວ່າ ມາຍາ ບຸກຄົນໃດລະມາຍານີ້ໄດ້ ບຸກຄົນນີ້ຮຽກວ່າ ຜູ້ບໍ່ມີມາຍາ

[໗໕] ບຸກຄົນຜູ້ມີຫິຣິ ເປັນແນວໃດ? ໃນຂໍ້ນັ້ນ ຫິຣິ ເປັນແນວໃດ?

ກິຣິຍາທີ່ລະອາຍຕໍ່ການປະພຶດທຸດຈະຣິດທີ່ຄວນລະອາຍ ກິຣິຍາທີ່ລະອາຍຕໍ່ການປະກອບສະພາວະທໍາທີ່ເປັນອະກຸສົນເຊິ່ງເປັນບາບ ນີ້ຮຽກວ່າ ຫິຣິ ບຸກຄົນຜູ້ປະກອບດ້ວຍຫິຣິ ນີ້ຊື່ວ່າ ຜູ້ມີຫິຣິ

[໗໖] ບຸກຄົນຜູ້ມີໂອດຕັບປະ ເປັນແນວໃດ? ໃນຂໍ້ນັ້ນ ໂອດຕັບປະ ເປັນແນວໃດ?

ກິຣິຍາທີ່ເກງກົວຕໍ່ການປະພຶດທຸດຈະຣິດທີ່ຄວນເກງກົວ ກິຣິຍາທີ່ເກງກົວຕໍ່ການປະກອບສະພາວະທໍາທີ່ເປັນອະກຸສົນເຊິ່ງເປັນບາບ ນີ້ຮຽກວ່າ ໂອດຕັບປະ ບຸກຄົນຜູ້ປະກອບດ້ວຍໂອດຕັບປະນີ້ຊື່ວ່າ ຜູ້ມີໂອດຕັບປະ

[໗໗] ບຸກຄົນຜູ້ວ່າງ່າຍ ເປັນແນວໃດ? ໃນຂໍ້ນັ້ນ ຄວາມເປັນຜູ້ວ່າງ່າຍ ເປັນແນວໃດ?

ກິຣິຍາຂອງຜູ້ວ່າງ່າຍ ພາວະຂອງຜູ້ວ່າງ່າຍ ຄວາມເປັນຜູ້ວ່າງ່າຍ ຄວາມບໍ່ຍຶດຖືຂ້າງຂັດຂືນ ຄວາມພໍໃຈໃນການບໍ່ໂຕ້ແຍ້ງ ຄວາມເອື້ອເຟື້ອ ພາວະແຫ່ງຜູ້ເອື້ອເຟື້ອ ຄວາມເຄົາລົບ ແລະຮັບຟັງໃນເມື່ອຖືກວ່າກ່າວໂດຍຊອບ ນີ້ຮຽກວ່າ ຄວາມເປັນຜູ້ວ່າງ່າຍ ບຸກຄົນຜູ້ປະກອບດ້ວຍຄວາມເປັນຜູ້ວ່າງ່າຍນີ້ຊື່ວ່າ ຜູ້ວ່າງ່າຍ

[໗໘] ບຸກຄົນຜູ້ມີມິດດີ ເປັນແນວໃດ? ໃນຂໍ້ນັ້ນ ຄວາມເປັນຜູ້ມີມິດດີ ເປັນແນວໃດ?

ບຸກຄົນຜູ້ມີສັດທາ ມີສີນ ສະດັບມາຫຼາຍ ມີຄວາມເສຍສະລະ ມີປັນຍາ ການ ເສບ ການສ້ອງເສບ ການສ້ອງເສບດ້ວຍດີ ການຄົບ ການຄົບຫາ ຄວາມພັກດີ ຄວາມຈົງຮັກດີ ຕໍ່ບຸກຄົນເຫຼົ່ານັ້ນ ຄວາມເປັນຜູ້ມີກາຍແລະໃຈເອນອຽງໄປຕາມບຸກຄົນເຫຼົ່ານັ້ນ ນີ້ຮຽກວ່າ ຄວາມເປັນຜູ້ມີມິດດີ ບຸກຄົນຜູ້ປະກອບດ້ວຍຄວາມເປັນຜູ້ມີມິດດີນີ້ຊື່ວ່າ ຜູ້ມີມິດດີ

[໗໙] ບຸກຄົນຜູ້ຄຸ້ມຄອງທະວານໃນອິນຊີ ເປັນແນວໃດ? ໃນຂໍ້ນັ້ນ ຄວາມເປັນຜູ້ຄຸ້ມຄອງທະວານໃນອິນຊີ ເປັນແນວໃດ?

ບຸກຄົນບາງຄົນໃນໂລກນີ້ເຫັນຮູບທາງຕາແລ້ວບໍ່ລວມຖື ບໍ່ແຍກຖື ຍ່ອມປະຕິບັດເພື່ອສັງລວມຈັກຂຸນຊີ ເຊິ່ງເມື່ອບໍ່ສັງລວມແລ້ວກໍເປັນເຫດໃຫ້ບາບອະກຸສົນທໍາທັງຫຼາຍຄືອະພິດຊາ ແລະໂທມະນັດຄອບງໍາໄດ້ ຍ່ອມຣະວັງຈັກຂຸນຊີ ເຖິງຄວາມສັງລວມຈັກຂຸນຊີ ຟັງສຽງທາງຫູ ฯລฯ ດົມກິ່ນທາງດັງ ฯລฯ ຊີມຣົດທາງລີ້ນ ฯລฯ ຖືກຕ້ອງໂຜດຖັບພະທາງກາຍ ฯລฯ ຮູ້ທໍາມາຣົມທາງໃຈ ເປັນຜູ້ບໍ່ລວມຖື ບໍ່ແຍກຖື ຍ່ອມປະຕິບັດເພື່ອສັງລວມມະນິນຊີ ເຊິ່ງເມື່ອບໍ່ສັງລວມແລ້ວຈະເປັນເຫດໃຫ້ບາບອະກຸສົນທໍາທັງຫຼາຍ ຄື ອະພິດຊາແລະໂທມະນັດຄອບງໍາໄດ້ ຍ່ອມຣະວັງມະນິນຊີ ຍ່ອມເຖິງຄວາມສັງລວມໃນມະນິນຊີ ຄວາມຄຸ້ມຄອງ ກິຣິຍາທີ່ຄຸ້ມຄອງ ການຮັກສາ ການສັງລວມອິນຊີ ທັງ ໖ ເຫຼົ່ານີ້ ນີ້ຮຽກວ່າ ຄວາມເປັນຜູ້ຄຸ້ມຄອງທະວານໃນອິນຊີ ບຸກຄົນຜູ້ປະກອບດ້ວຍຄວາມເປັນຜູ້ຄຸ້ມຄອງທະວານໃນອິນຊີ ນີ້ຊື່ວ່າ ຜູ້ຄຸ້ມຄອງທະວານໃນອິນຊີ

[໑໙] ບຸກຄົນຜູ້ຮູ້ຈັກປະມານໃນການບໍຣິໂພກ ເປັນແນວໃດ? ໃນຂໍ້ນັ້ນ ຄວາມເປັນຜູ້ຮູ້ຈັກປະມານໃນການບໍຣິໂພກ ເປັນແນວໃດ?

ບຸກຄົນບາງຄົນໃນໂລກນີ້ ພິຈາລະນາໂດຍແຍບຄາຍແລ້ວກືນກິນອາຫານບໍ່ແມ່ນເພື່ອຫຼິ້ນ ບໍ່ແມ່ນເພື່ອຄວາມມົວເມົາ ບໍ່ແມ່ນເພື່ອປະດັບ ບໍ່ແມ່ນເພື່ອຕົບແຕ່ງ ພຽງເພື່ອຄວາມດໍາຣົງຢູ່ແຫ່ງກາຍນີ້ ເພື່ອຍັງຊີວິຕິນຊີໃຫ້ເປັນໄປ ເພື່ອກໍາຈັດຄວາມຫິວ ເພື່ອອະນຸເຄາະພົມມະຈັນດ້ວຍຄິດເຫັນວ່າ “ເຮົາຈັກກໍາຈັດເວທະນາເກົ່າແລະຈັກບໍ່ໃຫ້ເວທະນາໃໝ່ເກີດຂຶ້ນ ຄວາມດໍາເນີນໄປແຫ່ງກາຍ ຄວາມບໍ່ມີໂທດ ແລະການຢູ່ຢ່າງຜາສຸກຈັກມີແກ່ເຮົາ” ຄວາມເປັນຜູ້ສັນໂດດ ຄວາມເປັນຜູ້ຮູ້ຈັກປະມານໃນການພິຈາລະນາແລ້ວ ບໍຣິໂພກໃນໂພຊະນາຫານນັ້ນ ນີ້ຮຽກວ່າ ຄວາມເປັນຜູ້ຮູ້ຈັກປະມານໃນການບໍຣິໂພກ ບຸກຄົນຜູ້ປະກອບດ້ວຍຄວາມເປັນຜູ້ຮູ້ຈັກປະມານໃນການບໍຣິໂພກນີ້ຊື່ວ່າ ຜູ້ຮູ້ຈັກປະມານໃນການບໍຣິໂພກ

[໑໘] ບຸກຄົນຜູ້ມີສະຕິຕັ້ງໝັ້ນ ເປັນແນວໃດ? ໃນຂໍ້ນັ້ນ ສະຕິ ເປັນແນວໃດ?

ສະຕິ ຄວາມຕາມຣະລຶກ ຄວາມຫວນຣະລຶກ ສະຕິ ກິຣິຍາທີ່ຣະລຶກ ຄວາມຊົງຈໍາ ຄວາມບໍ່ເລື່ອນລອຍ ຄວາມບໍ່ຫຼົງລືມ ສະຕິ ສະຕິນຊີ ສະຕິພະລະ ສໍາມາສະຕິອັນໃດ ນີ້ຮຽກວ່າ ສະຕິ ບຸກຄົນຜູ້ປະກອບດ້ວຍສະຕິ ນີ້ຊື່ວ່າ ຜູ້ມີສະຕິຕັ້ງໝັ້ນ

[໑໐] ບຸກຄົນຜູ້ມີສໍາປະຊັນຍະ ເປັນແນວໃດ? ໃນຂໍ້ນັ້ນ ສໍາປະຊັນຍະ ເປັນແນວໃດ?

ປັນຍາ ກິຣິຍາທີ່ຮູ້ຊັດແຈ້ງ ຄວາມວິໄຈ ຄວາມເລືອກສັນ ຄວາມວິໄຈທໍາ ຄວາມກໍານົດໝາຍ ຄວາມເຂົ້າໄປກໍານົດ ຄວາມເຂົ້າໄປກໍານົດສະເພາະ ພາວະທີ່ຮູ້ ພາວະທີ່ສະຫຼາດ ພາວະທີ່ຮູ້ລະອຽດ ຄວາມຮູ້ຢ່າງແຈ້ງຊັດ ຄວາມຄິດຄົ້ນ ຄວາມພິຈາຣະນາ ປັນຍາເໝືອນແຜ່ນດິນ ປັນຍາເຄື່ອງທໍາລາຍກິເລດ ປັນຍາເຄື່ອງນໍາທາງ ຄວາມເຫັນແຈ້ງ ຄວາມຮູ້ດີ ປັນຍາ ເໝືອນປະຕັກ ປັນຍາປັນຍິນຊີ ປັນຍາພະລະ ປັນຍາເໝືອນອາວຸດ ປັນຍາເໝືອນຜາສາດ ຄວາມສະຫວ່າງ ຄື ປັນຍາ ແສງສະຫວ່າງ ຄື ປັນຍາ ປັນຍາເໝືອນປະທີບ ປັນຍາເໝືອນດວງແກ້ວ

ຄວາມບໍ່ຫຼົງງົມງາຍ ຄວາມໄຈ້ແຍກທຳ ສຳມາທິດຖິ ນີ້ຮຽກວ່າ ສຳປະຊັນຍະ ບຸກຄົນຜູ້ປະກອບດ້ວຍສຳປະຊັນຍະນີ້ຊື່ວ່າ ຜູ້ມີສຳປະຊັນຍະ

[໗໑] ບຸກຄົນຜູ້ສົມບູນດ້ວຍສີນ ເປັນແນວໃດ? ໃນຂໍ້ນັ້ນ ຄວາມສົມບູນດ້ວຍສີນ ເປັນແນວໃດ?

ການບໍ່ລ່ວງລະເມີດທາງກາຍ ການບໍ່ລ່ວງລະເມີດທາງວາຈາ ການບໍ່ລ່ວງລະເມີດທັງທາງກາຍແລະທາງວາຈາ ນີ້ຮຽກວ່າ ຄວາມສົມບູນດ້ວຍສີນ ບຸກຄົນຜູ້ປະກອບດ້ວຍຄວາມສົມບູນດ້ວຍສີນນີ້ຊື່ວ່າ ຜູ້ສົມບູນດ້ວຍສີນ

[໗໔] ບຸກຄົນຜູ້ສົມບູນດ້ວຍທິດຖິ ເປັນແນວໃດ? ໃນຂໍ້ນັ້ນ ຄວາມສົມບູນດ້ວຍທິດຖິ ເປັນແນວໃດ?

ປັນຍາ ກິຣິຍາທີ່ຮູ້ຊັດແຈ້ງ ໆລໆ ຄວາມບໍ່ຫຼົງງົມງວາຍ ຄວາມໄຈ້ແຍກທຳ ສຳມາທິດຖິເຊັ່ນນີ້ວ່າ ທານທີ່ໃຫ້ແລ້ວມີຜົນ ຍັນທີ່ບູຊາແລ້ວມີຜົນ ການບວງສວງມີຜົນ ຜົນວິບາກຂອງກຳທີ່ເຮັດດີເຮັດຊົ່ວມີຜົນ ໂລກນີ້ມີ ໂລກໜ້າມີ ມານດາມີຄຸນ ບິດາມີຄຸນ ສັດທີ່ເກີດຜຸດຂຶ້ນມີ ສະມະນະພາມຜູ້ປະຕິບັດຊອບເຮັດໃຫ້ແຈ້ງໂລກນີ້ ແລະໂລກໜ້າດ້ວຍປັນຍາອັນຍິ່ງເອງແລ້ວສອນຜູ້ອື່ນໃຫ້ຮູ້ແຈ້ງມີຢູ່ໃນໂລກ ນີ້ຮຽກວ່າ ຄວາມສົມບູນດ້ວຍທິດຖິ ສຳມາທິດຖິແມ່ນທັງໝົດຊື່ວ່າ ຄວາມສົມບູນດ້ວຍທິດຖິ ບຸກຄົນຜູ້ປະກອບດ້ວຍຄວາມສົມບູນດ້ວຍທິດຖິນີ້ຊື່ວ່າ ຜູ້ສົມບູນດ້ວຍທິດຖິ

[໗໓] ບຸກຄົນຜູ້ຫາໄດ້ຍາກໃນໂລກ ໔ ຈຳພວກ ເປັນແນວໃດ?

ຄື ປຸບພະກາຣີບຸກຄົນ ແລະກະຕັນຍູກະຕະເວທີບຸກຄົນ ບຸກຄົນ ໔ ຈຳພວກເຫຼົ່ານີ້ຫາໄດ້ຍາກໃນໂລກ

[໗໔] ບຸກຄົນຜູ້ໃຫ້ອີ່ມໄດ້ຍາກໃນໂລກ ໔ ຈຳພວກ ເປັນແນວໃດ?

ຄື ບຸກຄົນຜູ້ເກັບສະສົມສິ່ງຂອງທີ່ຕົນໄດ້ແລ້ວ ໆ ແລະບຸກຄົນຜູ້ສະລະສິ່ງຂອງທີ່ຕົນໄດ້ແລ້ວ ໆ ບຸກຄົນ ໔ ຈຳພວກເຫຼົ່ານີ້ຊື່ວ່າ ຜູ້ໃຫ້ອີ່ມໄດ້ຍາກ

[໗໕] ບຸກຄົນຜູ້ໃຫ້ອີ່ມໄດ້ງ່າຍ ໔ ຈຳພວກ ເປັນແນວໃດ?

ຄື ບຸກຄົນຜູ້ບໍ່ເກັບສະສົມສິ່ງຂອງທີ່ຕົນໄດ້ແລ້ວ ໆ ແລະບຸກຄົນຜູ້ບໍ່ສະລະສິ່ງຂອງທີ່ຕົນໄດ້ແລ້ວ ໆ ບຸກຄົນ ໔ ຈຳພວກເຫຼົ່ານີ້ຊື່ວ່າ ຜູ້ໃຫ້ອີ່ມໄດ້ງ່າຍ

[໗໖] ອາສະວະຂອງບຸກຄົນ ໔ ຈຳພວກເຫຼົ່າໃດຍ່ອມເພີ່ມພູນ ບຸກຄົນຜູ້ຮັງກຽດສິ່ງທີ່ບໍ່ຄວນຮັງກຽດແລະບຸກຄົນຜູ້ບໍ່ຮັງກຽດສິ່ງທີ່ຄວນຮັງກຽດ

ອາສະວະຂອງບຸກຄົນ ໔ ຈຳພວກເຫຼົ່ານີ້ຍ່ອມເພີ່ມພູນ

[໗໗] ອາສະວະຂອງບຸກຄົນ ໔ ຈຳພວກເຫຼົ່າໃດຍ່ອມບໍ່ເພີ່ມພູນ

ບຸກຄົນຜູ້ບໍ່ຣັງກຽດສິ່ງທີ່ບໍ່ຄວນຣັງກຽດແລະບຸກຄົນຜູ້ຣັງກຽດສິ່ງທີ່ຄວນຣັງກຽດ ອາສະວະຂອງບຸກຄົນ ໔ ຈຳພວກເຫຼົ່ານີ້ຍ່ອມບໍ່ເພີ່ມພູນ

[໗໘] ບຸກຄົນຜູ້ມີອັດທະຍາໄສຊົ່ວ ເປັນແນວໃດ?

ບຸກຄົນບາງຄົນໃນໂລກນີ້ເປັນຜູ້ທຸສີນ ມີທຳອັນຊົ່ວຊາມ ເຂົາຍ່ອມເສບ ຍ່ອມຄົບຫາ ຍ່ອມເຂົ້າໄປນັ່ງໃກ້ບຸກຄົນອື່ນຜູ້ທຸສີນມີທຳອັນຊົ່ວຊາມ ບຸກຄົນນີ້ຮຽກວ່າ ຜູ້ມີອັດທະຍາໄສຊົ່ວ

[໗໙] ບຸກຄົນຜູ້ມີອັດທະຍາໄສປະນີດ ເປັນແນວໃດ?

ບຸກຄົນບາງຄົນໃນໂລກນີ້ເປັນຜູ້ມີສີນ ມີທຳອັນງາມ ເຂົາຍ່ອມເສບ ຍ່ອມຄົບຫາ ຍ່ອມເຂົ້າໄປນັ່ງໃກ້ບຸກຄົນອື່ນຜູ້ມີສີນ ມີທຳອັນງາມ ບຸກຄົນນີ້ຮຽກວ່າ ຜູ້ມີອັດທະຍາໄສປະນີດ

[໙໐] ບຸກຄົນຜູ້ອີ່ມແລ້ວ ເປັນແນວໃດ?

ພຣະປັດເຈກະພຸດທະເຈົ້າ ແລະພຣະອະຣະຫັນຕະສາວົກຂອງພຣະຕະຖາຄົດເຈົ້າຊື່ວ່າຜູ້ອີ່ມແລ້ວ ພຣະສຳມາສຳພຸດທະເຈົ້າຊື່ວ່າ ຜູ້ອີ່ມແລ້ວແລະເຮັດຄົນອື່ນໃຫ້ອີ່ມ

**ທຸກະນິດເທດ ຈົບ**

## ๓. ຕິກະປຸກຄະລະບັນຍັດ

[໙໑] ບຸກຄົນທີ່ໝົດຄວາມຫວັງ ເປັນແນວໃດ?

ບຸກຄົນບາງຄົນໃນໂລກນີ້ເປັນຜູ້ທຸສີນ ມີທຳອັນຊົ່ວຊາມ ບໍ່ສະອາດ ມີສະມາຈານອັນຄົນອື່ນຣະລຶກດ້ວຍຄວາມຣັງກຽດ ມີວຽກງານອັນປົກປິດ ບໍ່ແມ່ນສະມະນະແຕ່ປະຕິນຍາວ່າເປັນສະມະນະ ບໍ່ແມ່ນຜູ້ປະພຶດພົມມະຈັນ ແຕ່ປະຕິນຍາວ່າປະພຶດພົມມະຈັນ ຜູ້ເນົ່າໃນ ຊຸ່ມດ້ວຍຣາຄະເປັນເໝືອນຂີ້ເຫຍື່ອ ທ່ານໄດ້ຟັງມາວ່າ "ພິກຂຸຜູ້ມີຊື່ແນວນີ້ເຮັດໃຫ້ແຈ້ງເຈໂຕວິມຸດຕິ ປັນຍາວິມຸດຕິອັນບໍ່ມີອາສະວະ ຍ້ອນອາສະວະທັງຫຼາຍສິ້ນໄປດ້ວຍປັນຍາອັນຍິ່ງເອງເຂົ້າເຖິງຢູ່ໃນປັດຈຸບັນ" ທ່ານຍອມບໍ່ມີຄວາມຄິດແນວນີ້ວ່າ "ແມ່ນເຮົາກໍຈັກເຮັດໃຫ້ແຈ້ງເຈໂຕວິມຸດຕິ ປັນຍາວິມຸດຕິອັນບໍ່ມີອາສະວະຍ້ອນອາສະວະທັງຫຼາຍສິ້ນໄປດ້ວຍປັນຍາອັນຍິ່ງເອງເຂົ້າເຖິງຢູ່ໃນປັດຈຸບັນ" ດັ່ງນີ້ ບຸກຄົນນີ້ຮຽກວ່າ ຜູ້ທີ່ໝົດຄວາມຫວັງ

[໙໔] ບຸກຄົນທີ່ຍັງມີຄວາມຫວັງ ເປັນແນວໃດ?

ບຸກຄົນບາງຄົນໃນໂລກນີ້ເປັນຜູ້ມີສີນ ມີທຳອັນງາມ ທ່ານໄດ້ຟັງມາວ່າ "ພິກຂຸຜູ້ມີຊື່ແນວນີ້ເຮັດໃຫ້ແຈ້ງເຈໂຕວິມຸດຕິ ປັນຍາວິມຸດຕິອັນບໍ່ມີອາສະວະຍ້ອນອາສະວະທັງຫຼາຍສິ້ນໄປດ້ວຍປັນຍາອັນຍິ່ງເອງເຂົ້າເຖິງຢູ່ໃນປັດຈຸບັນ" ທ່ານມີຄວາມຄິດແນວນີ້ວ່າ "ແມ່ນເຮົາກໍຈະເຮັດ

ໃຫ້ແຈ້ງເຈໂຕວິມຸດຕິ ປັນຍາວິມຸດຕິອັນບໍ່ມີອາສະວະ ຍ້ອນອາສະວະທັງຫຼາຍສິ້ນໄປດ້ວຍປັນຍາອັນຍິ່ງເອງ ເຂົ້າເຖິງຢູ່ໃນປັດຈຸບັນ" ດັ່ງນີ້ ບຸກຄົນນີ້ຮຽກວ່າ ຜູ້ທີ່ຍັງມີຄວາມຫວັງ

[໘໓] ບຸກຄົນທີ່ປາສະຈາກຄວາມຫວັງ ເປັນແນວໃດ?

ບຸກຄົນບາງຄົນໃນໂລກນີ້ເຮັດໃຫ້ແຈ້ງເຈໂຕວິມຸດຕິ ປັນຍາວິມຸດຕິອັນບໍ່ມີອາສະວະຍ້ອນອາສະວະທັງຫຼາຍສິ້ນໄປດ້ວຍປັນຍາອັນຍິ່ງເອງ ເຂົ້າເຖິງຢູ່ໃນປັດຈຸບັນ ທ່ານໄດ້ຟັງມາວ່າ "ພິກຂຸຜູ້ມີຊື່ແນວນີ້ເຮັດໃຫ້ແຈ້ງເຈໂຕວິມຸດຕິ ປັນຍາວິມຸດຕິອັນບໍ່ມີອາສະວະ ຍ້ອນອາສະວະທັງຫຼາຍສິ້ນໄປ ດ້ວຍປັນຍາອັນຍິ່ງເອງເຂົ້າເຖິງຢູ່ໃນປັດຈຸບັນ" ດັ່ງນີ້ ທ່ານຍ່ອມບໍ່ມີຄວາມຄິດແນວນີ້ວ່າ "ແມ່ນເຮົາກໍເຮັດໃຫ້ແຈ້ງເຈໂຕວິມຸດຕິ ປັນຍາວິມຸດຕິອັນບໍ່ມີອາສະວະ ຍ້ອນອາສະວະທັງຫຼາຍສິ້ນໄປດ້ວຍປັນຍາອັນຍິ່ງເອງເຂົ້າເຖິງຢູ່ໃນປັດຈຸບັນ" ດັ່ງນີ້ ຂໍ້ນັ້ນຍ້ອນເຫດໃດ ຍ້ອນວ່າຄວາມຫວັງໃນຄວາມຫຼຸດພົ້ນ ຂອງບຸກຄົນຜູ້ຍັງບໍ່ເຄີຍຫຼຸດພົ້ນໃນການກ່ອນນັ້ນສະງົບຣະງັບແລ້ວ ບຸກຄົນນີ້ຮຽກວ່າ ຜູ້ທີ່ປາສະຈາກຄວາມຫວັງ

[໘໔] ບັນດາບຸກຄົນເຫຼົ່ານັ້ນ ບຸກຄົນປຽບເໝືອນຄົນໄຂ້ ໓ ຈຳພວກ ເປັນແນວໃດ?

ຄົນໄຂ້ ໓ ຈຳພວກ ຄື

໑. ຄົນໄຂ້ບາງຄົນໃນໂລກນີ້ໄດ້ໂພຊະນະທີ່ເປັນສັບປາຍະ ຫຼື ບໍ່ໄດ້ໂພຊະນະທີ່ເປັນສັບປາຍະ ໄດ້ຢາທີ່ເປັນສັບປາຍະ ຫຼື ບໍ່ໄດ້ຢາທີ່ເປັນສັບປາຍະ ໄດ້ຄົນປິ່ນປົວທີ່ເໝາະສົມ ຫຼື ບໍ່ໄດ້ຄົນປິ່ນປົວທີ່ເໝາະສົມຍ່ອມບໍ່ຫາຍຈາກອາພາດນັ້ນ

໒. ຄົນໄຂ້ບາງຄົນໃນໂລກນີ້ໄດ້ໂພຊະນະທີ່ເປັນສັບປາຍະ ຫຼື ບໍ່ໄດ້ໂພຊະນະທີ່ເປັນສັບປາຍະ ໄດ້ຢາທີ່ເປັນສັບປາຍະ ຫຼື ບໍ່ໄດ້ຢາທີ່ເປັນສັບປາຍະ ໄດ້ຄົນປິ່ນປົວທີ່ເໝາະສົມ ຫຼື ບໍ່ໄດ້ຄົນປິ່ນປົວທີ່ເໝາະສົມຍ່ອມຫາຍຈາກອາພາດນັ້ນ

໓. ຄົນໄຂ້ບາງຄົນໃນໂລກນີ້ໄດ້ໂພຊະນະທີ່ເປັນສັບປາຍະ ຍ່ອມຫາຍຈາກອາພາດ ເມື່ອບໍ່ໄດ້ຍ່ອມບໍ່ຫາຍຈາກອາພາດນັ້ນ ໄດ້ຢາທີ່ເປັນສັບປາຍະຍ່ອມຫາຍຈາກອາພາດ ເມື່ອບໍ່ໄດ້ຍ່ອມບໍ່ຫາຍຈາກອາພາດນັ້ນ ໄດ້ຄົນປິ່ນປົວທີ່ເໝາະສົມຍ່ອມຫາຍຈາກອາພາດ ເມື່ອບໍ່ໄດ້ຍ່ອມບໍ່ຫາຍຈາກອາພາດນັ້ນບັນດາຄົນໄຂ້ ໓ ຈຳພວກນັ້ນ ຄົນໄຂ້ຜູ້ໄດ້ໂພຊະນະທີ່ເປັນສັບປາຍະຍ່ອມຫາຍຈາກອາພາດນັ້ນ ເມື່ອບໍ່ໄດ້ຍ່ອມບໍ່ຫາຍ ໄດ້ຢາທີ່ເປັນສັບປາຍະຍ່ອມ ຫາຍຈາກອາພາດນັ້ນ ເມື່ອບໍ່ໄດ້ຍ່ອມບໍ່ຫາຍ ໄດ້ຄົນປິ່ນປົວທີ່ເໝາະສົມຍ່ອມຫາຍຈາກອາພາດນັ້ນ ເມື່ອບໍ່ໄດ້ຍ່ອມບໍ່ຫາຍຈາກອາພາດນັ້ນ ຍ້ອນອາໄສຄົນໄຂ້ນີ້ ພຣະຜູ້ມີພຣະພາກເຈົ້າຈຶ່ງຊົງອະນຸຍາດອາຫານສຳລັບພິກຂຸໄຂ້ຢາສຳລັບພິກຂຸໄຂ້ ຄົນປິ່ນປົວສຳລັບພິກຂຸ

ໄຂ້ ກໍຍ້ອນອາໄສຄົນໄຂ້ນີ້ ຄົນໄຂ້ແມ່ນອື່ນ ໆ ກໍຄວນໄດ້ຮັບການປິ່ນປົວດ້ວຍ ບຸກຄົນປຽບເໝືອນຄົນໄຂ້ ໓ ຈຳພວກ ມີຜາກົດຢູ່ໃນໂລກແນວນີ້ຄືກັນ

ບຸກຄົນ ໓ ຈຳພວກ ເປັນແນວໃດ?

໑. ບຸກຄົນບາງຄົນໃນໂລກນີ້ໄດ້ເຫັນພຣະຕະຖາຄົດເຈົ້າຫຼືບໍ່ໄດ້ເຫັນກໍຕາມ ໄດ້ຟັງທຳວິໄນທີ່ພຣະຕະຖາຄົດເຈົ້າປະກາດແລ້ວ ຫຼື ບໍ່ໄດ້ຟັງກໍຕາມ ຍ່ອມບໍ່ຢັ່ງລົງສູ່ນິຍາມທີ່ຖືກຕ້ອງໃນກຸສົນທຳທັງຫຼາຍ

໒. ບຸກຄົນບາງຄົນໃນໂລກນີ້ໄດ້ເຫັນພຣະຕະຖາຄົດເຈົ້າ ຫຼື ບໍ່ໄດ້ເຫັນກໍຕາມ ໄດ້ຟັງທຳວິໄນທີ່ພຣະຕະຖາຄົດເຈົ້າປະກາດແລ້ວຫຼືບໍ່ໄດ້ຟັງກໍຕາມ ຍ່ອມຢັ່ງລົງສູ່ນິຍາມທີ່ຖືກຕ້ອງໃນກຸສົນທຳທັງຫຼາຍ

໓. ບຸກຄົນບາງຄົນໃນໂລກນີ້ໄດ້ເຫັນພຣະຕະຖາຄົດເຈົ້າ ຈຶ່ງຢັ່ງລົງສູ່ນິຍາມທີ່ຖືກຕ້ອງ ເມື່ອບໍ່ໄດ້ເຫັນຍ່ອມບໍ່ຢັ່ງລົງ ໄດ້ຟັງທຳວິໄນທີ່ພຣະຕະຖາຄົດເຈົ້າປະກາດແລ້ວ ຈຶ່ງຢັ່ງລົງສູ່ນິຍາມທີ່ຖືກຕ້ອງໃນກຸສົນທຳທັງຫຼາຍ ເມື່ອບໍ່ໄດ້ຟັງຍ່ອມບໍ່ຢັ່ງລົງບັນດາບຸກຄົນ ໓ ຈຳພວກນັ້ນ ບຸກຄົນຜູ້ໄດ້ເຫັນພຣະຕະຖາຄົດເຈົ້າ ຈຶ່ງຢັ່ງລົງສູ່ນິຍາມທີ່ຖືກຕ້ອງໃນກຸສົນທຳທັງຫຼາຍ ເມື່ອບໍ່ໄດ້ເຫັນຍ່ອມບໍ່ຢັ່ງລົງ ໄດ້ຟັງທຳວິໄນທີ່ພຣະຕະຖາຄົດເຈົ້າປະກາດແລ້ວ ຈຶ່ງຢັ່ງລົງສູ່ນິຍາມທີ່ຖືກຕ້ອງໃນກຸສົນທຳທັງຫຼາຍ ເມື່ອບໍ່ໄດ້ຟັງຍ່ອມບໍ່ຢັງລົງຍ້ອນອາໄສບຸກຄົນນີ້ພຣະຜູ້ມີພຣະພາກຈຶ່ງຊົງອະນຸຍາດການສະແດງທຳ ຍ້ອນອາໄສບຸກຄົນນີ້ ຈຶ່ງຄວນສະແດງທຳແກ່ຄົນແມ່ນເຫຼົ່າອື່ນ ບຸກຄົນປຽບເໝືອນຄົນໄຂ້ ໓ ຈຳພວກນີ້ມີຜາກົດຢູ່ໃນໂລກ

[໗໔] ບຸກຄົນຜູ້ເປັນກາຍະສັກຂີ ເປັນແນວໃດ?

ບຸກຄົນບາງຄົນໃນໂລກນີ້ສຳຜັດວິໂມກ ໘ ດ້ວຍກາຍຢູ່ ອັນໜຶ່ງ ອາສະວະບາງຢ່າງຂອງເຂົາຍ່ອມສິ້ນໄປຍ້ອນເຫັນດ້ວຍປັນຍາບຸກຄົນນີ້ຮຽກວ່າ ຜູ້ເປັນກາຍະສັກຂີ

[໗໕] ບຸກຄົນຜູ້ເປັນທິດຖິປັດຕະ ເປັນແນວໃດ?

ບຸກຄົນບາງຄົນໃນໂລກນີ້ຮູ້ຊັດແຈ້ງຕາມຄວາມເປັນຈິງວ່າ “ນີ້ທຸກ ນີ້ເຫດເກີດແຫ່ງທຸກ ນີ້ຄວາມດັບທຸກ ນີ້ຂໍ້ປະຕິບັດໃຫ້ເຖິງຄວາມດັບທຸກ” ແລະສະພາວະທຳທີ່ພຣະຕະຖາຄົດເຈົ້າປະກາດແລ້ວ ເປັນອັນເຂົາເຫັນຊັດແຈ້ງແລ້ວປະພຶດດີແລ້ວດ້ວຍປັນຍາ ແລະອາສະວະບາງຢ່າງຂອງເຂົາຍ່ອມສິ້ນໄປຍ້ອນເຫັນດ້ວຍປັນຍາ ບຸກຄົນນີ້ຮຽກວ່າ ຜູ້ເປັນທິດຖິປັດຕະ

[໗໖] ບຸກຄົນຜູ້ເປັນສັດທາວິມຸດຕະ ເປັນແນວໃດ?

ບຸກຄົນບາງຄົນໃນໂລກນີ້ຮູ້ຊັດແຈ້ງຕາມຄວາມເປັນຈິງວ່າ "ນີ້ທຸກ ຯລຯ" ສະພາວະທຳທີ່ພຣະຕະຖາຄົດເຈົ້າປະກາດແລ້ວເປັນອັນເຂົາພຣເຫັນຊັດແຈ້ງແລ້ວ ປະພຶດດີແລ້ວດ້ວຍປັນຍາ ແລະອາສະວະບາງຢ່າງຂອງເຂົາຍ່ອມສິ້ນໄປຍ້ອນເຫັນດ້ວຍປັນຍາ ແຕ່ບໍ່ເໝືອນອາສະວະຂອງບຸກຄົນຜູ້ເປັນທິດຖິປັດຕະ ບຸກຄົນນີ້ຮຽກວ່າ ຜູ້ເປັນສັດທາວິມຸດຕະ

[໙໗] ບຸກຄົນຜູ້ເວົ້າພາສາຄູດ ເປັນແນວໃດ?

ບຸກຄົນບາງຄົນໃນໂລກນີ້ມັກເວົ້າຕົວະ ຢູ່ໃນສະພາ ຢູ່ໃນບໍລິສັດ ຢູ່ທ່າມກາງຍາດພີ່ນ້ອງ ຢູ່ທ່າມກາງທະຫານ ຫຼື ຢູ່ທ່າມກາງຣາດຊະສຳນັກ ຖືກເຂົານຳໄປອ້າງເປັນພະຍານຊັກຖາມວ່າ "ບຸຣຸດຜູ້ຈະເລີນ ມາເຖີດ ທ່ານຮູ້ສິ່ງໃດ ຈົ່ງກ່າວສິ່ງນັ້ນ" ບຸກຄົນນັ້ນບໍ່ຮູ້ກໍກ່າວວ່າ "ຮູ້" ຫຼື ຮູ້ກໍກ່າວວ່າ "ບໍ່ຮູ້" ບໍ່ເຫັນກໍກ່າວວ່າ "ເຫັນ" ຫຼື ເຫັນກໍກ່າວວ່າ "ບໍ່ເຫັນ" ເວົ້າຕົວະທັງທີ່ຮູ້ຢູ່ ຍ້ອນເຫດແຫ່ງຕົນ ຍ້ອນເຫດແຫ່ງບຸກຄົນອື່ນ ຫຼື ຍ້ອນເຫດຄືເຫັນແກ່ອາມິດ ເລັກໜ້ອຍ ດ້ວຍປະການແນວນີ້ ບຸກຄົນນີ້ຮຽກວ່າ ຜູ້ເວົ້າພາສາຄູດ

[໙໙] ບຸກຄົນຜູ້ເວົ້າພາສາດອກໄມ້ ໑ ເປັນແນວໃດ?

ບຸກຄົນບາງຄົນໃນໂລກນີ້ລະການເວົ້າຕົວະ ເວັ້ນຂາດຈາກການເວົ້າຕົວະ ຢູ່ໃນສະພາ ຢູ່ໃນບໍລິສັດ ຢູ່ໃນທ່າມກາງຍາດພີ່ນ້ອງ ຢູ່ໃນທ່າມກາງທະຫານ ຫຼື ຢູ່ໃນທ່າມກາງຣາດຊະສຳນັກ ຖືກເຂົານຳໄປອ້າງເປັນພະຍານຊັກຖາມວ່າ "ບຸຣຸດຜູ້ຈະເລີນ ມາເຖີດ ທ່ານຮູ້ສິ່ງໃດ ຈົ່ງກ່າວສິ່ງນັ້ນ" ບຸກຄົນນັ້ນບໍ່ຮູ້ກໍກ່າວວ່າ "ບໍ່ຮູ້" ຫຼືຮູ້ກໍກ່າວວ່າ "ຮູ້" ບໍ່ເຫັນກໍກ່າວວ່າ "ບໍ່ເຫັນ" ຫຼືເຫັນກໍກ່າວວ່າ "ເຫັນ" ບໍ່ເວົ້າຕົວະທັງທີ່ຮູ້ ຍ້ອນເຫດແຫ່ງຕົນ ຍ້ອນເຫດແຫ່ງບຸກຄົນອື່ນ ຫຼື ຍ້ອນເຫດ ຄືເຫັນແກ່ອາມິດເລັກໜ້ອຍ ດ້ວຍປະການແນວນີ້ ບຸກຄົນນີ້ຮຽກວ່າ ຜູ້ເວົ້າພາສາດອກໄມ້

[໑໐໐] ບຸກຄົນຜູ້ເວົ້າພາສານ້ຳເຜີ້ງ ເປັນແນວໃດ?

ບຸກຄົນບາງຄົນໃນໂລກນີ້ເປັນຜູ້ກ່າວແຕ່ວາຈາທີ່ບໍ່ມີໂທດ ສະບາຍຫູ ໄພເຣາະ ຈັບໃຈ ເປັນວາຈາຂອງຊາວເມືອງ ຄົນສ່ວນຫຼາຍຮັກແພງພໍໃຈ ບຸກຄົນນີ້ຮຽກວ່າ ຜູ້ເວົ້າພາສານ້ຳເຜີ້ງ

[໑໐໑] ບຸກຄົນຜູ້ມີຈິດເໝືອນບາດເກົ່າ ເປັນແນວໃດ?

ບຸກຄົນບາງຄົນໃນໂລກນີ້ເປັນຜູ້ມັກໂກດ ຫຼາຍໄປດ້ວຍຄວາມຄັບແຄ້ນໃຈ ຖືກວ່າກ່າວພຽງເລັກໜ້ອຍກໍຂັດໃຈ ຄຽດ ພະຍາບາດ ຂຶ້ງຄຽດ ສະແດງອາການໂກດ ຂັດເຄືອງແລະບໍ່ພໍໃຈ ປຽບເໝືອນບາດເກົ່າຖືກໄມ້ ຫຼື ກະເບື້ອງກະທົບເຂົ້າ ຍ່ອມຫຼັ່ງນ້ຳໜອງອອກຫຼາຍແມ່ນສັນໃດ ບຸກຄົນບາງຄົນໃນໂລກນີ້ກໍສັນນັ້ນຄືກັນ ເປັນຜູ້ມັກໂກດ ຫຼາຍໄປດ້ວຍຄວາມແຄ້ນໃຈ ແມ່ນຖືກວ່າກ່າວພຽງເລັກໜ້ອຍກໍຂັດໃຈ ຄຽດ ພະຍາບາດ ຂຶ້ງຄຽດ ສະແດງອາການໂກດ ຂັດເຄືອງ ແລະບໍ່ພໍໃຈ ບຸກຄົນນີ້ຮຽກວ່າ ຜູ້ມີຈິດເໝືອນບາດເກົ່າ

[໑໐໒] ບຸກຄົນຜູ້ມີຈິດເໝືອນຟ້າແມບ ເປັນແນວໃດ?

ບຸກຄົນບາງຄົນໃນໂລກນີ້ຮູ້ຊັດແຈ້ງຕາມຄວາມເປັນຈິງວ່າ "ນີ້ທຸກ ນີ້ເຫດເກີດແຫ່ງທຸກ ນີ້ຄວາມດັບທຸກ ນີ້ຂໍ້ປະຕິບັດໃຫ້ເຖິງຄວາມດັບທຸກ" ປຽບເໝືອນຄົນຕາດີເພິ່ງເຫັນຮູບໃນຂະນະທີ່ຟ້າແມບໃນເວລາກາງຄືນທີ່ມືດມິດແມ່ນສັນໃດ ບຸກຄົນບາງຄົນໃນໂລກນີ້ກໍສັນນັ້ນຄືກັນ ຮູ້ຊັດແຈ້ງຕາມຄວາມເປັນຈິງວ່າ "ນີ້ທຸກ ນີ້ເຫດເກີດແຫ່ງທຸກ ນີ້ຄວາມດັບທຸກ ນີ້ຂໍ້ປະຕິບັດໃຫ້ເຖິງຄວາມດັບທຸກ" ບຸກຄົນນີ້ຮຽກວ່າ ຜູ້ມີຈິດເໝືອນຟ້າແມບ

[໑໐໓] ບຸກຄົນຜູ້ມີຈິດເໝືອນເພັດ ເປັນແນວໃດ?

ບຸກຄົນບາງຄົນໃນໂລກນີ້ເຮັດໃຫ້ແຈ້ງເຈໂຕວິມຸດຕິປັນຍາ ວິມຸດຕິອັນບໍ່ມີອາສະວະ ຍ້ອນອາສະວະທັງຫຼາຍສິ້ນໄປດ້ວຍປັນຍາອັນຍິ່ງເອງເຂົ້າເຖິງຢູ່ໃນປັດຈຸບັນ ປຽບເໝືອນແກ້ວມະນີ ຫຼືຫີນບາງຊະນິດທີ່ເພັດຈະທຳລາຍບໍ່ໄດ້ຍ່ອມບໍ່ມີແມ່ນສັນໃດ ບຸກຄົນບາງຄົນໃນໂລກນີ້ກໍສັນນັ້ນ ຄືກັນເຮັດໃຫ້ແຈ້ງເຈໂຕວິມຸດຕິປັນຍາວິມຸດຕິອັນບໍ່ມີອາສະວະ ຍ້ອນອາສະວະທັງຫຼາຍສິ້ນໄປດ້ວຍປັນຍາອັນຍິ່ງເອງເຂົ້າເຖິງຢູ່ໃນປັດຈຸບັນ ບຸກຄົນນີ້ຮຽກວ່າ ຜູ້ມີຈິດເໝືອນເພັດ

[໑໐໔] ບຸກຄົນຕາບອດ ເປັນແນວໃດ?

ບຸກຄົນບາງຄົນໃນໂລກນີ້ບໍ່ມີດວງຕາເປັນເຫດໃຫ້ໄດ້ໂພຄະຊັບທີ່ຍັງບໍ່ໄດ້ ຫຼື ເຮັດໂພຄະຊັບທີ່ໄດ້ແລ້ວໃຫ້ເພີ່ມພູນ ແລະເຂົາບໍ່ມີດວງຕາເປັນເຄື່ອງຮູ້ທຳທີ່ເປັນກຸສົນແລະອະກຸສົນ ຮູ້ທຳທີ່ມີໂທດແລະບໍ່ມີໂທດ ຮູ້ທຳທີ່ຊົ່ວແລະປະນີດ ຮູ້ທຳທີ່ມີສ່ວນປຽບ ດ້ວຍທຳຝ່າຍດຳແລະທຳຝ່າຍຂາວ ນີ້ຮຽກວ່າ ບຸກຄົນຕາບອດ

[໑໐໕] ບຸກຄົນຕາດຽວ ເປັນແນວໃດ?

ບຸກຄົນບາງຄົນໃນໂລກນີ້ມີດວງຕາເປັນເຫດໃຫ້ໄດ້ໂພຄະຊັບທີ່ຍັງບໍ່ໄດ້ ຫຼື ເຮັດໂພຄະຊັບ ທີ່ໄດ້ແລ້ວໃຫ້ເພີ່ມພູນ ແຕ່ເຂົາບໍ່ມີດວງຕາເປັນເຄື່ອງຮູ້ທຳທີ່ເປັນກຸສົນແລະອະກຸສົນ ຮູ້ທຳທີ່ມີໂທດແລະບໍ່ມີໂທດ ຮູ້ທຳທີ່ຊົ່ວແລະປະນີດ ຮູ້ທຳທີ່ມີສ່ວນປຽບດ້ວຍທຳຝ່າຍດຳແລະທຳຝ່າຍຂາວ ນີ້ຮຽກວ່າ ບຸກຄົນຕາດຽວ

[໑໐໖] ບຸກຄົນສອງຕາ ເປັນແນວໃດ?

ບຸກຄົນບາງຄົນໃນໂລກນີ້ມີດວງຕາເປັນເຫດໃຫ້ໄດ້ໂພຄະຊັບທີ່ຍັງບໍ່ໄດ້ ຫຼື ເຮັດໂພຄະຊັບທີ່ໄດ້ແລ້ວໃຫ້ເພີ່ມພູນ ແລະເຂົາມີດວງຕາເປັນເຄື່ອງຮູ້ທຳທີ່ເປັນກຸສົນແລະອະກຸສົນ ຮູ້ທຳທີ່ມີໂທດແລະບໍ່ມີໂທດ ຮູ້ທຳທີ່ຊົ່ວແລະປະນີດ ຮູ້ທຳທີ່ມີສ່ວນປຽບດ້ວຍທຳຝ່າຍດຳແລະທຳຝ່າຍຂາວ ນີ້ຮຽກວ່າ ບຸກຄົນສອງຕາ

[໑໐໗] ບຸກຄົນຜູ້ມີປັນຍາເໝືອນໝໍ້ຂວ້ຳ ເປັນແນວໃດ?

ບຸກຄົນບາງຄົນໃນໂລກນີ້ໄປວັດເປັນປະຈຳເພື່ອຟັງທຳໃນສຳນັກຂອງພິກຂຸທັງຫຼາຍ ພິກຂຸທັງຫຼາຍສະແດງທຳມີຄວາມງາມໃນເບື້ອງຕົ້ນ ມີຄວາມງາມໃນທ່າມກາງ ແລະມີຄວາມງາມໃນ

ບ່ອນສຸດ ປະກາດພົມມະຈັນ ພ້ອມທັງອັດຖະແລະພະຍັນຊະນະອັນບໍລິສຸດ ບໍລິບູນຄົບຖ້ວນແກ່ເຂົາ ເຂົານັ່ງຢູ່ບ່ອນນັ້ນຈຳເບື້ອງຕົ້ນ ທ່າມກາງ ແລະບ່ອນສຸດແຫ່ງກະຖານັ້ນບໍ່ໄດ້ ແມ່ນລຸກຈາກບ່ອນນັ້ນແລ້ວກໍຈຳເບື້ອງຕົ້ນ ທ່າມກາງ ແລະບ່ອນສຸດແຫ່ງກະຖານັ້ນບໍ່ໄດ້ ປຽບເໝືອນໝໍ້ຂວ້ຳທີ່ເຂົາຖອກນ້ຳລົງໄປ ນ້ຳຍ່ອມໄຫຼອອກໄປ ບໍ່ຂັງຢູ່ແມ່ນສັນໃດ ບຸກຄົນບາງຄົນໃນໂລກນີ້ກໍສັນນັ້ນຄືກັນ ໄປວັດເປັນປະຈຳເພື່ອຟັງທຳໃນສຳນັກຂອງພິກຂຸທັງຫຼາຍ ພິກຂຸທັງຫຼາຍສະແດງທຳມີຄວາມງາມໃນເບື້ອງຕົ້ນ ມີຄວາມງາມໃນທ່າມກາງ ແລະມີຄວາມງາມໃນບ່ອນສຸດ ປະກາດພົມມະຈັນພ້ອມທັງອັດຖະ ແລະພະຍັນຊະນະ ອັນບໍລິສຸດບໍລິບູນຄົບຖ້ວນແກ່ເຂົາ ເຂົານັ່ງຢູ່ບ່ອນນັ້ນຈຳເບື້ອງຕົ້ນ ທ່າມກາງ ແລະບ່ອນສຸດແແຫ່ງກະຖານັ້ນບໍ່ໄດ້ ແມ່ນລຸກຈາກບ່ອນນັ້ນແລ້ວກໍຍັງຈຳເບື້ອງຕົ້ນ ທ່າມກາງ ແລະບ່ອນສຸດແຫ່ງກະຖານັ້ນບໍ່ໄດ້ ບຸກຄົນນີ້ຮຽກວ່າ ຜູ້ມີປັນຍາເໝືອນໝໍ້ຂວ້ຳ

[໑໐໗] ບຸກຄົນຜູ້ມີປັນຍາເໝືອນຖົງເນັບແອວ ເປັນແນວໃດ?

ບຸກຄົນບາງຄົນໃນໂລກນີ້ໄປວັດເປັນປະຈຳເພື່ອຟັງທຳໃນສຳນັກຂອງພິກຂຸທັງຫຼາຍ ພິກຂຸທັງຫຼາຍສະແດງທຳມີຄວາມງາມໃນເບື້ອງຕົ້ນ ມີຄວາມງາມໃນທ່າມກາງ ແລະມີຄວາມງາມໃນບ່ອນສຸດ ປະກາດພົມມະຈັນພ້ອມທັງອັດຖະ ແລະພະຍັນຊະນະອັນບໍລິສຸດ ບໍລິບູນຄົບຖ້ວນແກ່ເຂົາ ເຂົານັ່ງຢູ່ບ່ອນນັ້ນຈຳເບື້ອງຕົ້ນ ທ່າມກາງ ແລະບ່ອນສຸດແແຫ່ງກະຖານັ້ນໄດ້ ແຕ່ລຸກຈາກບ່ອນນັ້ນແລ້ວຈຳເບື້ອງຕົ້ນ ທ່າມກາງ ແລະບ່ອນສຸດແຫ່ງກະຖານັ້ນບໍ່ໄດ້ ປຽບເໝືອນບຸຣຸດເກັບຂອງກິນຕ່າງ ໆ ຄື ງາ ເຂົ້າສານ ຂະຕົ້ມ ໝາກກະທັນໄວ້ທີ່ຖົງເນັບແອວ ບຸຣຸດນັ້ນເມື່ອລຸກຈາກບ່ອນນັ້ນກໍເຮັດໃຫ້ຂອງທີ່ຢູ່ໃນຖົງນັ້ນແຕກກະຈາຍທົ່ວ ຍ້ອນເຜີສະຕິແມ່ນສັນໃດ ບຸກຄົນບາງຄົນໃນໂລກນີ້ກໍສັນນັ້ນຄືກັນ ໄປວັດເປັນປະຈຳເພື່ອຟັງທຳໃນສຳນັກຂອງພິກຂຸທັງຫຼາຍ ພິກຂຸທັງຫຼາຍສະແດງທຳມີຄວາມງາມໃນເບື້ອງຕົ້ນ ມີຄວາມງາມໃນທ່າມກາງ ແລະມີຄວາມງາມໃນບ່ອນສຸດ ປະກາດພົມມະຈັນພ້ອມທັງອັດຖະ ແລະພະຍັນຊະນະອັນບໍລິສຸດບໍລິບູນຄົບຖ້ວນ ແກ່ເຂົາ ເຂົານັ່ງຢູ່ບ່ອນນັ້ນຈຳເບື້ອງຕົ້ນ ທ່າມກາງແລະບ່ອນສຸດແຫ່ງກະຖານັ້ນໄດ້ ແຕ່ລຸກຈາກບ່ອນນັ້ນແລ້ວກໍຈຳເບື້ອງຕົ້ນ ທ່າມກາງແລະບ່ອນສຸດແຫ່ງກະຖານັ້ນບໍ່ໄດ້ ບຸກຄົນນີ້ຮຽກວ່າ ຜູ້ມີປັນຍາເໝືອນຖົງເນັບແອວ

[໑໐໘] ບຸກຄົນຜູ້ມີປັນຍາກວ້າງຂວາງ ເປັນແນວໃດ?

ບຸກຄົນບາງຄົນໃນໂລກນີ້ ໄປວັດເປັນປະຈຳເພື່ອຟັງທຳໃນສຳນັກຂອງພິກຂຸທັງຫຼາຍ ພິກຂຸທັງຫຼາຍສະແດງທຳມີຄວາມງາມໃນເບື້ອງຕົ້ນ ມີຄວາມງາມໃນທ່າມກາງແລະມີຄວາມງາມໃນບ່ອນສຸດ ປະກາດພົມມະຈັນພ້ອມທັງອັດຖະແລະພະຍັນຊະນະອັນບໍລິສຸດ ບໍລິບູນຄົບຖ້ວນແກ່ເຂົາ ເຂົານັ່ງຢູ່ບ່ອນນັ້ນຈຳເບື້ອງຕົ້ນ ທ່າມກາງ ແລະບ່ອນສຸດແຫ່ງກະຖານັ້ນໄດ້ ແມ່ນລຸກຈາກບ່ອນນັ້ນກໍຍັງຈຳເບື້ອງຕົ້ນ ທ່າມກາງ ແລະບ່ອນສຸດແຫ່ງກະຖານັ້ນໄດ້ ປຽບເໝືອນໝໍ້ຫງາຍທີ່

ເຂົາຖອກນ້ຳລົງໄປ ນ້ຳຍ່ອມຂັງຢູ່ ບໍ່ໄຫຼອອກໄປແມ່ນສັນໃດ ບຸກຄົນບາງຄົນ ໃນໂລກນີ້ກໍ ສັນນັ້ນຄືກັນ ໄປວັດເປັນປະຈຳເພື່ອຟັງທຳໃນສຳນັກຂອງພິກຂຸທັງຫຼາຍ ພິກຂຸທັງຫຼາຍສະແດງ ທຳມີຄວາມງາມໃນເບື້ອງຕົ້ນ ມີຄວາມງາມໃນທ່າມກາງ ແລະມີຄວາມງາມໃນບ່ອນສຸດ ປະກາດ ພົມມະຈັນພ້ອມທັງອັດຖະ ແລະພະຍັນຊະນະບໍລິສຸດບໍລິບູນຄົບຖ້ວນແກ່ເຂົາ ເຂົານັ່ງຢູ່ບ່ອນນັ້ນ ຈຳເບື້ອງຕົ້ນ ທ່າມກາງ ແລະບ່ອນສຸດແຫ່ງກະຖານັ້ນໄດ້ ແມ່ນລຸກຈາກອາສະນະນັ້ນແລ້ວກໍຍັງ ຈຳເບື້ອງຕົ້ນ ທ່າມກາງ ແລະບ່ອນສຸດແຫ່ງກະຖານັ້ນໄດ້ ບຸກຄົນນີ້ຮຽກວ່າ ຜູ້ມີປັນຍາກວ້າງ ຂວາງ

[໑໑໐] ບຸກຄົນຜູ້ຍັງມີການຣາຄະແລະພະວະຣາຄະ ເປັນແນວໃດ?

ບຸກຄົນຜູ້ເປັນໂສດາບັນແລະສະກະທາຄາມີ ບຸກຄົນເຫຼົ່ານີ້ຮຽກວ່າ ຜູ້ຍັງມີການຣາຄະ ແລະພະວະຣາຄະ

[໑໑໑] ບຸກຄົນຜູ້ບໍ່ມີການຣາຄະ ແຕ່ຍັງມີພະວະຣາຄະ ເປັນແນວໃດ?

ບຸກຄົນຜູ້ເປັນອະນາຄາມີບຸກຄົນນີ້ຮຽກວ່າ ຜູ້ບໍ່ມີການຣາຄະແຕ່ຍັງມີພະວະຣາຄະ

[໑໑໒] ບຸກຄົນຜູ້ບໍ່ມີທັງການຣາຄະແລະພະວະຣາຄະ ເປັນແນວໃດ?

ບຸກຄົນຜູ້ເປັນອະຣະຫັນ ບຸກຄົນນີ້ຮຽກວ່າຜູ້ບໍ່ມີການຣາຄະແຕ່ຍັງມີພະວະຣາຄະ

[໑໑໓] ບຸກຄົນຜູ້ປຽບເໝືອນຮອຍຂີດເທິງແຜ່ນຫີນ ເປັນແນວໃດ?

ບຸກຄົນບາງຄົນໃນໂລກນີ້ໂກດເປັນປະຈຳ ແລະຄວາມໂກດຂອງເຂົານັ້ນກໍໝັກໝົມຢູ່ດົນ ນານ ຮອຍຂີດເທິງແຜ່ນຫີນຍ່ອມບໍ່ລົບເລືອນຫາຍໄປຍ້ອນລົມຫຼືນ້ຳ ຍ່ອມຕິດຢູ່ດົນນານແມ່ນ ສັນໃດ ບຸກຄົນບາງຄົນໃນໂລກນີ້ກໍສັນນັ້ນຄືກັນ ໂກດເປັນປະຈຳ ແລະຄວາມໂກດຂອງເຂົານັ້ນກໍ ໝັກໝົມຢູ່ໄດ້ດົນນານ ບຸກຄົນນີ້ຮຽກວ່າ ຜູ້ປຽບເໝືອນຮອຍຂີດເທິງແຜ່ນຫີນ

[໑໑໔] ບຸກຄົນຜູ້ປຽບເໝືອນຮອຍຂີດທີ່ແຜ່ນດິນ ເປັນແນວໃດ?

ບຸກຄົນບາງຄົນໃນໂລກນີ້ໂກດເປັນປະຈຳ ແຕ່ຄວາມໂກດຂອງເຂົານັ້ນບໍ່ໝັກໝົມຢູ່ດົນ ນານ ຮອຍຂີດທີ່ແຜ່ນດິນຍ່ອມລົບເລືອນຫາຍໄປໄດ້ຍ້ອນລົມຫຼືນ້ຳ ບໍ່ຜາກົດຢູ່ດົນນານຊື່ແມ່ນ ສັນໃດ ບຸກຄົນບາງຄົນໃນໂລກນີ້ກໍສັນນັ້ນຄືກັນ ໂກດເປັນປະຈຳ ແຕ່ຄວາມໂກດຂອງເຂົານັ້ນບໍ່ ໝັກໝົມຢູ່ໄດ້ດົນນານ ບຸກຄົນນີ້ຮຽກວ່າ ຜູ້ປຽບເໝືອນຮອຍຂີດຢູ່ແຜ່ນດິນ

[໑໑໕] ບຸກຄົນຜູ້ປຽບເໝືອນຮອຍຂີດຢູ່ນ້ຳ ເປັນແນວໃດ?

ບຸກຄົນບາງຄົນໃນໂລກນີ້ແມ່ນຈະຖືກວ່າດ້ວຍຄຳໜັກ ໆ ແມ່ນຈະຖືກວ່າດ້ວຍຄຳຫຍາບ ແມ່ນຈະຖືກວ່າດ້ວຍຄຳທີ່ບໍ່ໜ້າພໍໃຈກໍຍັງຄົງສະມານໄມຕີກົນກຽວຢູ່ ປອງດອງກັນຢູ່ ຮອຍຂີດຢູ່ ນ້ຳຍ່ອມຈາງຫາຍໄປໄດ້ໄວ ບໍ່ຜາກົດຢູ່ໄດ້ດົນນານແມ່ນສັນໃດ ບຸກຄົນບາງຄົນໃນໂລກນີ້ກໍ

ສັນນັ້ນຄືກັນ ແມ່ນຈະຖືກວ່າດ້ວຍຄຳໜັກ ໆ ແມ່ນຈະຖືກວ່າດ້ວຍຄຳຫຍາບ ແມ່ນຈະຖືກວ່າດ້ວຍຄຳທີ່ບໍ່ພໍໃຈກໍຍັງຄົງສະມານໄມຕີກົນກຽວຢູ່ ປອງດອງກັນຢູ່ ບຸກຄົນນີ້ຮຽກວ່າ ຜູ້ປຽບເໝືອນຮອຍຂີດຢູ່ນ້ຳ

[໑໑໖] ບັນດາບຸກຄົນເຫຼົ່ານັ້ນ ບຸກຄົນປຽບເໝືອນຜ້າເປືອກໄມ້ ໓ ຈຳພວກ ເປັນແນວໃດ?

ຜ້າເປືອກໄມ້ ໓ ຊະນິດ ຄື

| | | | |
|---|---|---|---|
| ໑. ຜ້າເປືອກໄມ້ໃໝ່ | ມີສີບໍ່ງາມ | ມີສຳຜັດຫຍາບ | ແລະມີຣາຄາກໍຖືກ |
| ໒. ຜ້າເປືອກໄມ້ປານກາງ | ມີສີບໍ່ງາມ | ມີສຳຜັດຫຍາບ | ແລະມີຣາຄາກໍຖືກ |
| ໓. ຜ້າເປືອກໄມ້ເກົ່າ | ມີສີບໍ່ງາມ | ມີສຳຜັດຫຍາບ | ແລະມີຣາຄາກໍຖືກ |

ຄົນທັງຫຼາຍຍ່ອມໃຊ້ຜ້າເປືອກໄມ້ເກົ່າໃຫ້ເປັນຜ້າເຊັດໝໍ້ເຂົ້າ ຫຼື ຖິ້ມມັນຢູ່ກອງຂີ້ເຫຍື່ອ ບຸກຄົນປຽບເໝືອນຜ້າເປືອກໄມ້ ໓ ຈຳພວກເຫຼົ່ານີ້ ມີປາກົດຢູ່ໃນພິກຂຸທັງຫຼາຍແນວນີ້ຄືກັນ

ພິກຂຸປຽບເໝືອນຜ້າເປືອກໄມ້ ໓ ຈຳພວກ ເປັນແນວໃດ?

໑. ແມ່ນຖ້າພິກຂຸຜູ້ເປັນນະວະກະ ເປັນຜູ້ທຸສີນ ມີທຳອັນຊົ່ວຊາມ ນີ້ເປັນເຫດໃຫ້ພິກຂຸນັ້ນເປັນຜູ້ມີຜິວພັນເສົ້າໝອງ ຜູ້ນີ້ປຽບເໝືອນຜ້າເປືອກໄມ້ມີສີທີ່ບໍ່ງາມນັ້ນ ສ່ວນບຸກຄົນເຫຼົ່າໃດຄົບຫາໃກ້ຊິດ ພາກັນເອົາຢ່າງທ່ານ ການຄົບຫາເປັນຕົ້ນນັ້ນຍ່ອມເປັນໄປເພື່ອບໍ່ແມ່ນປະໂຫຍດເກື້ອກູນ ເພື່ອທຸກແກ່ຄົນເຫຼົ່ານັ້ນຕະຫຼອດການດົນນານ ນີ້ເປັນເຫດໃຫ້ພິກຂຸນັ້ນມີການຕິດຕໍ່ກໍ່ ໃຫ້ເກີດທຸກ ຜູ້ນີ້ປຽບເໝືອນຜ້າເປືອກໄມ້ທີ່ມີສຳຜັດຫຍາບນັ້ນ ກໍພິກຂຸນັ້ນຮັບຈີວອນ ບິນທະບາດ ເສນາສະນະ ແລະຄິລານະປັດໄຈເພສັດບໍຣິຂານຂອງຄົນເຫຼົ່າໃດ ທານຂອງບຸກຄົນເຫຼົ່ານັ້ນ ບໍ່ມີຜົນຫຼາຍ ບໍ່ມີອານິສົງຫຼາຍ ນີ້ເປັນເຫດໃຫ້ພິກຂຸນັ້ນມີຄ່າໜ້ອຍ ຜູ້ນີ້ປຽບເໝືອນຜ້າເປືອກໄມ້ທີ່ມີຣາຄາຖືກ

໒. ແມ່ນຖ້າພິກຂຸຜູ້ເປັນມັດຊິມະ ຯລຯ ແມ່ນຖ້າພິກຂຸຜູ້ເປັນເຖຣະ ແຕ່ເປັນຜູ້ທຸສີນ ມີທຳອັນຊົ່ວຊາມ ນີ້ເປັນເຫດໃຫ້ພິກຂຸນັ້ນມີຜິວພັນເສົ້າໝອງ ຜູ້ນີ້ປຽບເໝືອນຜ້າເປືອກໄມ້ທີ່ມີສີບໍ່ງາມນັ້ນ ສ່ວນບຸກຄົນເຫຼົ່າໃດຄົບຫາ ໃກ້ຊິດ ພາກັນເອົາຢ່າງທ່ານ ການຄົບຫາເປັນຕົ້ນນັ້ນຍ່ອມເປັນໄປເພື່ອບໍ່ແມ່ນປະໂຫຍດເກື້ອກູນ ເພື່ອທຸກແກ່ບຸກຄົນເຫຼົ່ານັ້ນຕະຫຼອດການດົນນານ ນີ້ເປັນເຫດໃຫ້ພິກຂຸນັ້ນມີ ການຕິດຕໍ່ກໍ່ໃຫ້ເກີດທຸກ ຜູ້ນີ້ປຽບເໝືອນຜ້າເປືອກໄມ້ທີ່ມີສຳຜັດຫຍາບນັ້ນ ກໍພິກຂຸນັ້ນຮັບຈີວອນ ບິນທະບາດ ເສນາສະນະ ແລະຄິລານະປັດໄຈເພສັດບໍຣິຂານຂອງບຸກ

ຄົນເຫຼົ່າໃດ ທານຂອງບຸກຄົນເຫຼົ່ານັ້ນບໍ່ມີຜົນຫຼາຍ ບໍ່ມີອານິສົງຫຼາຍ ນີ້ເປັນເຫດໃຫ້ພິກຂຸນັ້ນມີຄ່າໜ້ອຍ ຜູ້ນີ້ປຽບເໝືອນຜ້າເປືອກໄມ້ທີ່ມີຣາຄາຖືກ

໓. ຫາກພິກຂຸຜູ້ເປັນເຖຣະເຫັນປານນີ້ກ່າວໃນທ່າມກາງສົງ ພິກຂຸທັງຫຼາຍ ກໍຈະກ່າວ ກັບທ່ານແນວນີ້ວ່າ "ຈະມີປະໂຫຍດອັນໃດດ້ວຍຄໍາທີ່ຄົນພານ ບໍ່ສະຫຼາດກ່າວອອກໄປ ແມ່ນຕົວທ່ານກໍເຂົ້າໃຈຄໍາທີ່ຄວນກ່າວ" ທ່ານໂກດ ບໍ່ພໍໃຈ ເປ່ງວາຈາທີ່ເປັນເຫດໃຫ້ສົງຍົກວັດ ເໝືອນຜ້າເປືອກໄມ້ທີ່ເຂົາຖິ້ມທີ່ກອງຂີ້ເຫຍື້ອບຸກຄົນປຽບເໝືອນຜ້າເປືອກໄມ້ ໓ ຈໍາພວກເຫຼົ່ານີ້ມີຜາກົດຢູ່ໃນພິກຂຸທັງຫຼາຍ

[໑໑໗] ບັນດາບຸກຄົນເຫຼົ່ານັ້ນ ບຸກຄົນປຽບເໝືອນຜ້າແຄວັ້ນກາສີ ໓ ຈໍາພວກເປັນແນວໃດ?

ຜ້າແຄວັ້ນກາສີ ໓ ຊະນິດ ຄື

໑. ຜ້າແຄວັ້ນກາສີທີ່ຍັງໃໝ່ ມີສີງາມ ສໍາຜັດສະບາຍ ແລະມີຣາຄາແພງ
໒. ຜ້າແຄວັ້ນກາສີແມ່ນກາງເກົ່າກາງໃໝ່ ມີສີງາມສໍາຜັດສະບາຍແລະມີຣາຄາແພງ
໓. ຜ້າແຄວັ້ນກາສີແມ່ນຈະເກົ່າ ແຕ່ກໍມີສີງາມ ສໍາຜັດສະບາຍ ແລະມີຣາຄາແພງ ຄົນທັງຫຼາຍຍ່ອມໃຊ້ຜ້າແຄວັ້ນກາສີແມ່ນເກົ່າໃຫ້ເປັນຜ້າຫໍ່ແກ້ວ ຫຼື ເອົາໃສ່ໄວ້ໃນຜະອົບຂອງຫອມບຸກຄົນປຽບເໝືອນຜ້າແຄວັ້ນກາສີ ໓ ຈໍາພວກເຫຼົ່ານີ້ມີຜາກົດຢູ່ໃນພິກຂຸທັງຫຼາຍແນວນີ້ຄືກັນ

ພິກຂຸ ໓ ຈໍາພວກ ເປັນແນວໃດ?

໑. ແມ່ນຖ້າພິກຂຸຜູ້ເປັນນະວະກະ ມີສິນ ມີທໍາອັນງາມ ນີ້ເປັນເຫດໃຫ້ພິກຂຸນັ້ນມີຜິວພັນງາມ ຜູ້ນີ້ປຽບເໝືອນຜ້າແຄວັ້ນກາສີທີ່ມີສີງາມນັ້ນ ບຸກຄົນເຫຼົ່າໃດຄົບຫາໃກ້ຊິດ ພາກັນເອົາຢ່າງທ່ານ ການຄົບຫາເປັນຕົ້ນນັ້ນຍ່ອມເປັນໄປເພື່ອເກື້ອກູນເພື່ອສຸກແກ່ບຸກຄົນເຫຼົ່ານັ້ນຕະຫຼອດການດົນນານ ນີ້ເປັນເຫດໃຫ້ພິກຂຸນັ້ນມີການຕິດຕໍ່ກໍ່ໃຫ້ເກີດສຸກ ຜູ້ນີ້ປຽບເໝືອນຜ້າແຄວັ້ນກາສີທີ່ມີສໍາຜັດສະບາຍນັ້ນ ພິກຂຸນັ້ນຮັບຈີວອນ ບິນທະບາດ ເສນາສະນະ ແລະຄິລານະປັດໄຈ ເພສັດບໍຣິຂານຂອງບຸກຄົນເຫຼົ່າໃດ ທານຂອງບຸກຄົນເຫຼົ່ານັ້ນຍ່ອມມີຜົນຫຼາຍ ມີອານິສົງຫຼາຍ ນີ້ເປັນເຫດໃຫ້ພິກຂຸນັ້ນມີຄ່າຫຼາຍ ຜູ້ນີ້ປຽບເໝືອນຜ້າແຄວັ້ນກາສີທີ່ມີຣາຄາແພງ

໒. ແມ່ນຖ້າພິກຂຸຜູ້ເປັນມັດຊິມະ ໗ລ໗ ຜູ້ເປັນເຖຣະ ມີສິນ ມີທໍາອັນງາມນີ້ເປັນເຫດໃຫ້ພິກຂຸນັ້ນມີຜິວພັນງາມ ຜູ້ນີ້ປຽບເໝືອນຜ້າແຄວັ້ນກາສີທີ່ມີສີງາມນັ້ນ ສ່ວນບຸກຄົນເຫຼົ່າໃດຄົບຫາ ໃກ້ຊິດ ພາກັນເອົາຢ່າງທ່ານ ການຄົບຫາເປັນຕົ້ນນັ້ນຍ່ອມເປັນໄປເພື່ອເກື້ອກູນ ເພື່ອສຸກແກ່ບຸກຄົນເຫຼົ່ານັ້ນຕະຫຼອດການດົນນານ

ນີ້ເປັນເຫດໃຫ້ພິກຂຸນັ້ນມີການຕິດຕໍ່ກໍ່ໃຫ້ເກີດສຸກ ຜູ້ນີ້ປຽບເໝືອນຜ້າແຄວັນກາສີທີ່ມີສຳຜັດສະບາຍນັ້ນ ກໍພິກຂຸນັ້ນຮັບຈີວອນ ບິນທະບາດ ເສນາສະນະ ແລະຄິລານະປັດໄຈເພສັດບໍຣິຂານຂອງບຸກຄົນເຫຼົ່າໃດ ທານຂອງບຸກຄົນເຫຼົ່ານັ້ນ ຍ່ອມມີຜົນຫຼາຍ ມີອານິສົງຫຼາຍ ນີ້ເປັນເຫດໃຫ້ພິກຂຸນັ້ນມີຄ່າຫຼາຍ ຜູ້ນີ້ປຽບເໝືອນຜ້າແຄວັນກາສີທີ່ມີຣາຄາແພງ

໓. ຖ້າພິກຂຸຜູ້ເປັນເຖຣະເຫັນປານນີ້ກ່າວໃນທ່າມກາງສົງ ພິກຂຸທັງຫຼາຍກໍຈະກ່າວກັບທ່ານແນວນີ້ວ່າ ຂໍໃຫ້ທ່ານທັງຫຼາຍຈົ່ງສະງົບເຖີດ ພິກຂຸທີ່ເປັນພຣະເຖຣະຈະກ່າວທຳແລະວິໄນ ຄຳເວົ້ານັ້ນຂອງພຣະເຖຣະຄວນຊົງຈຳໄວ້ໃນຫົວໃຈ ເໝືອນຜ້າແຄວັນກາສີທີ່ຄວນເກັບໄວ້ໃນຜະອົບຂອງຫອມສັນນັ້ນ ບຸກຄົນປຽບເໝືອນຜ້າແຄວັນກາສີ ໓ ຈຳພວກເຫຼົ່ານີ້ມີຜາກົດຢູ່ໃນພິກຂຸທັງຫຼາຍ

[໑໑໗] ບຸກຄົນຜູ້ປະເມີນໄດ້ງ່າຍ ເປັນແນວໃດ?

ບຸກຄົນບາງຄົນໃນໂລກນີ້ເປັນຄົນຟຸ້ງຊ່ານ ຖືຕົວ ໂລເລ ປາກກ້າ ເວົ້າພ່ຳເພື້ອ ມີສະຕິຫຼົງລືມ ບໍ່ມີສຳປະຊັນຍະ ມີຈິດບໍ່ຕັ້ງໝັ້ນ ມີຈິດກວັດແກວ່ງ ບໍ່ສັງລວມອິນຊີ ບຸກຄົນນີ້ຮຽກວ່າ ຜູ້ປະເມີນໄດ້ງ່າຍ

[໑໑໘] ບຸກຄົນຜູ້ປະເມີນໄດ້ຍາກ ເປັນແນວໃດ?

ບຸກຄົນບາງຄົນໃນໂລກນີ້ເປັນຄົນບໍ່ຟຸ້ງຊ່ານ ບໍ່ຖືຕົວ ບໍ່ໂລເລ ບໍ່ເປັນຄົນປາກກ້າ ບໍ່ເວົ້າພ່ຳເພື້ອ ມີສະຕິໝັ້ນຄົງ ມີສຳປະຊັນຍະ ມີຈິດຕັ້ງໝັ້ນ ມີຈິດແນ່ວແນ່ ສຳລວມອິນຊີ ບຸກຄົນນີ້ຮຽກວ່າ ຜູ້ປະເມີນໄດ້ຍາກ

[໑໘໐] ບຸກຄົນຜູ້ປະມານບໍ່ໄດ້ ເປັນແນວໃດ?

ບຸກຄົນບາງຄົນໃນໂລກນີ້ ເຮັດໃຫ້ແຈ້ງເຈໂຕວິມຸດຕິ ປັນຍາວິມຸດຕິ ອັນບໍ່ມີອາສະວະຍ້ອນອາສະວະທັງຫຼາຍສິ້ນໄປດ້ວຍປັນຍາອັນຍິ່ງເອງເຂົ້າເຖິງຢູ່ໃນປັດຈຸບັນ ບຸກຄົນນີ້ຮຽກວ່າ ຜູ້ປະມານບໍ່ໄດ້

[໑໘໑] ບຸກຄົນທີ່ບໍ່ຄວນເສບ ບໍ່ຄວນຄົບ ບໍ່ຄວນເຂົ້າໄປນັ່ງໃກ້ ເປັນແນວໃດ?

ບຸກຄົນບາງຄົນໃນໂລກນີ້ເປັນຄົນຕ່ຳຊາມກວ່າຕົນໃນດ້ານສີນ ສະມາທິ ປັນຍາ ບຸກຄົນເຊັ່ນນີ້ບໍ່ຄວນເສບ ບໍ່ຄວນຄົບ ບໍ່ຄວນເຂົ້າໄປນັ່ງໃກ້ ເວັ້ນໄວ້ແຕ່ຄວາມອິດູແລະຄວາມອະນຸເຄາະ

[໑໘໘] ບຸກຄົນທີ່ຄວນເສບ ຄວນຄົບ ຄວນເຂົ້າໄປນັ່ງໃກ້ ເປັນແນວໃດ?

ບຸກຄົນບາງຄົນໃນໂລກນີ້ເປັນຄົນສະເໝີຕົນໃນດ້ານສີນ ສະມາທິ ປັນຍາ ບຸກຄົນເຊັ່ນນີ້ຄວນເສບ ຄວນຄົບ ຄວນເຂົ້າໄປນັ່ງໃກ້ ຂໍ້ນັ້ນຍ້ອນເຫດໃດ ຍ້ອນການສົນທະນາກ່ຽວກັບສີນ

ສະມາທິ ປັນຍາ ຈັກມີແກ່ເຮົາທັງຫຼາຍຜູ້ເຖິງຄວາມສະເໝີກັນໃນດ້ານສີນ ສະມາທິ ປັນຍາ ການສົນທະນາຂອງເຮົາທັງຫຼາຍນັ້ນຈັກເປັນຄວາມສຳຣານແລະຈັກດຳເນີນໄປໄດ້ ດັ່ງນັ້ນ ບຸກຄົນເຊັ່ນນີ້ ຈຶ່ງຄວນເສບ ຄວນຄົບ ຄວນເຂົ້າໄປນັ່ງໃກ້

[໑໘໓] ບຸກຄົນທີ່ຄວນສັກກາຣະ ເຄົາລົບແລ້ວຈຶ່ງເສບ ຄົບ ເຂົ້າໄປນັ່ງໃກ້ ເປັນແນວໃດ?

ບຸກຄົນບາງຄົນໃນໂລກນີ້ເປັນຜູ້ເໜືອກວ່າຕົນໃນດ້ານສີນ ສະມາທິ ປັນຍາ ບຸກຄົນເຊັ່ນນີ້ຄວນສັກກາຣະ ເຄົາລົບແລ້ວຈຶ່ງເສບ ຄົບ ເຂົ້າໄປນັ່ງໃກ້ ຂໍ້ນັ້ນຍ້ອນເຫດໃດ ຍ້ອນບຸກຄົນເຊັ່ນນີ້ຄິດວ່າ “ເຮົາຈັກໄດ້ບຳເພັນສີນຂັນ (ກອງສີນ) ສະມາທິຂັນ (ກອງສະມາທິ) ປັນຍາຂັນ (ກອງປັນຍາ) ທີ່ຍັງບໍ່ບໍລິບູນໃຫ້ບໍລິບູນຫຼືຈັກອະນຸເຄາະສີນຂັນ ສະມາທິຂັນ ປັນຍາຂັນທີ່ບໍລິບູນດ້ວຍປັນຍາໃນບ່ອນນັ້ນ ໆ” ດັ່ງນັ້ນ ບຸກຄົນເຊັ່ນນີ້ຄວນສັກກາຣະ ເຄົາລົບແລ້ວຈຶ່ງເສບ ຄົບ ເຂົ້າໄປນັ່ງໃກ້

[໑໘໔] ບຸກຄົນທີ່ຄວນຣັງກຽດ ບໍ່ຄວນເສບ ບໍ່ຄວນຄົບ ບໍ່ຄວນເຂົ້າໄປນັ່ງໃກ້ ເປັນແນວໃດ?

ບຸກຄົນບາງຄົນໃນໂລກນີ້ເປັນຜູ້ທຸສີນ ມີທຳອັນຊົ່ວຊາມ ບໍ່ສະອາດ ມີຄວາມປະພຶດທີ່ໜ້າຣັງກຽດ ມີວຽກງານອັນປົກປິດບໍ່ແມ່ນສະມະນະແຕ່ປະຕິນຍາວ່າເປັນສະມະນະ ບໍ່ແມ່ນ ພົມມະຈາຣີ ແຕ່ປະຕິນຍາວ່າເປັນພົມມະຈາຣີ ເນົ່າພາຍໃນ ຊຸ່ມດ້ວຍຣາຄະ ເປັນເໝືອນຂີ້ເຫຍື້ອ ບຸກຄົນເຊັ່ນນີ້ຄວນຣັງກຽດ ບໍ່ຄວນເສບ ບໍ່ຄວນຄົບ ບໍ່ຄວນເຂົ້າໄປນັ່ງໃກ້ ຂໍ້ນັ້ນຍ້ອນເຫດໃດ ຍ້ອນຄົນທົ່ວໄປແມ່ນຈະບໍ່ໄດ້ເອົາຢ່າງບຸກຄົນເຊັ່ນນີ້ ແຕ່ກິດຕິສັບອັນຊົ່ວຂອງເຂົາຍ່ອມກະຈາຍໄປວ່າ ຄົນຄົບມິດຊົ່ວ ຄົບສະຫາຍຊົ່ວ ຄົບເພື່ອນຊົ່ວ ປຽບເໝືອນງູທີ່ເປື້ອນຄູດເຖິງຈະບໍ່ກັດໃຜ ແຕ່ກໍເຮັດໃຫ້ເປື້ອນໄດ້ສັນໃດ ຄົນທົ່ວໄປກໍສັນນັ້ນຄືກັນ ແມ່ນຈະບໍ່ໄດ້ເອົາຢ່າງບຸກຄົນເຊັ່ນນັ້ນ ແຕ່ກິດຕິສັບອັນຊົ່ວຂອງເຂົາກໍກະຈາຍໄປວ່າ ຄົນຄົບມິດຊົ່ວ ຄົບສະຫາຍຊົ່ວ ຄົບເພື່ອນຊົ່ວ ດັ່ງນັ້ນບຸກຄົນເຊັ່ນນີ້ຈຶ່ງຄວນຣັງກຽດ ບໍ່ຄວນເສບ ບໍ່ຄວນຄົບ ບໍ່ຄວນເຂົ້າໄປນັ່ງໃກ້

[໑໘໕] ບຸກຄົນທີ່ຄວນວາງເສີຍ ບໍ່ຄວນເສບ ບໍ່ຄວນຄົບ ບໍ່ຄວນເຂົ້າໄປນັ່ງໃກ້ ເປັນແນວໃດ?

ບຸກຄົນບາງຄົນໃນໂລກນີ້ເປັນຄົນມັກໂກດ ຫຼາຍໄປດ້ວຍຄວາມແຄ້ນໃຈ ຖືກວ່າກ່າວພຽງເລັກໜ້ອຍກໍຂັດໃຈ ຄຽດ ພະຍາບາດ ຂຶ້ງຄຽດ ສະແດງອາການໂກດ ຂັດເຄືອງແລະບໍ່ພໍໃຈ ປຽບເໝືອນບາດເກົ່າຖືກໄມ້ ຫຼື ກະເບື້ອງກະທົບເຂົ້າ ຍ່ອມຫຼັ່ງນ້ຳໜອງອອກມາຫຼາຍຍິ່ງຂຶ້ນແມ່ນສັນໃດ ບຸກຄົນບາງຄົນໃນໂລກນີ້ກໍສັນນັ້ນຄືກັນ ເປັນຄົນມັກໂກດ ຫຼາຍໄປດ້ວຍຄວາມຄັບແຄ້ນໃຈ ຖືກວ່າກ່າວພຽງເລັກໜ້ອຍກໍຂັດໃຈ ຄຽດ ພະຍາບາດ ຂຶ້ງຄຽດ ສະແດງອາການໂກດ ຂັດເຄືອງ ແລະບໍ່ພໍໃຈ ປຽບເໝືອນຖ່ານໄມ້ໝາກພັບຖືກໄມ້ ຫຼື ກະເບື້ອງກະທົບເຂົ້າຍ່ອມປະທຸເກີນ

ປະມານ ແມ່ນສັນໃດ ບຸກຄົນບາງຄົນໃນໂລກນີ້ກໍສັນນັ້ນຄືກັນ ເປັນຄົນມັກໂກດ ຫຼາຍໄປດ້ວຍຄວາມຄັບແຄ້ນໃຈ ຖືກວ່າກ່າວພຽງເລັກໜ້ອຍກໍຂັດໃຈ ຄຽດ ພະຍາບາດ ຂຶ້ງຄຽດສະແດງອາການໂກດ ຂັດເຄືອງ ແລະບໍ່ພໍໃຈ

ປຽບເໝືອນຂຸມຄູດຖືກໄມ້ ຫຼື ກະເບື້ອງກະທົບເຂົ້າຍ່ອມສົ່ງກິ່ນເໝັນຮຸນແຮງຂຶ້ນ ແມ່ນສັນໃດ ບຸກຄົນບາງຄົນໃນໂລກນີ້ກໍສັນນັ້ນຄືກັນ ເປັນຄົນມັກໂກດ ຫຼາຍໄປດ້ວຍຄວາມຄັບແຄ້ນໃຈ ຖືກວ່າກ່າວພຽງເລັກໜ້ອຍກໍຂັດໃຈຄຽດ ພະຍາບາດ ຂຶ້ງຄຽດ ສະແດງອາການໂກດ ຂັດເຄືອງ ແລະບໍ່ພໍໃຈ ບຸກຄົນເຊັ່ນນີ້ຄວນວາງເສີຍ ບໍ່ຄວນເສບ ບໍ່ຄວນຄົບ ບໍ່ຄວນເຂົ້າໄປນັ່ງໃກ້ ຂໍ້ນັ້ນຍ້ອນເຫດໃດ ຍ້ອນບຸກຄົນບາງຄົນຄິດວ່າ "ບຸກຄົນເຊັ່ນນີ້ຈະເພິ່ງດ່າເຮົາແດ່ ບໍຣິພາດເຮົາແດ່ ເຮັດເຮົາໃຫ້ຈິບຫາຍແດ່" ດັ່ງນັ້ນ ບຸກຄົນເຊັ່ນນີ້ຈຶ່ງຄວນວາງເສີຍ ບໍ່ຄວນເສບ ບໍ່ຄວນຄົບ ບໍ່ຄວນເຂົ້າໄປນັ່ງໃກ້

[໑໘໖] ບຸກຄົນທີ່ຄວນເສບ ຄວນຄົບ ຄວນເຂົ້າໄປນັ່ງໃກ້ ເປັນແນວໃດ?

ບຸກຄົນບາງຄົນໃນໂລກນີ້ເປັນຜູ້ມີສິນ ມີທຳອັນງາມ ບຸກຄົນເຊັ່ນນີ້ຄວນເສບ ຄວນຄົບ ຄວນເຂົ້າໄປນັ່ງໃກ້ ຂໍ້ນັ້ນຍ້ອນເຫດໃດ ຍ້ອນບຸກຄົນທົ່ວໄປແມ່ນຈະບໍ່ໄດ້ເອົາຢ່າງບຸກຄົນ ເຊັ່ນນີ້ ແຕ່ກິດຕິສັບອັນງາມຂອງເຂົາກໍຂະຈອນໄປວ່າ "ຄົນຄົບມິດດີ ຄົບສະຫາຍດີ ຄົບເພື່ອນດີ" ດັ່ງນັ້ນ ບຸກຄົນເຊັ່ນນີ້ຈຶ່ງຄວນເສບ ຄວນຄົບ ຄວນເຂົ້າໄປນັ່ງໃກ້

[໑໘໗] ບຸກຄົນຜູ້ມີປົກກະຕິເຮັດໃຫ້ບໍລິບູນໃນສິນ ເຮັດໃຫ້ພໍປະມານໃນສະມາທິ ເຮັດໃຫ້ພໍປະມານໃນປັນຍາ ເປັນແນວໃດ?

ບຸກຄົນຜູ້ເປັນໂສດາບັນແລະສະກະທາຄາມີ ບຸກຄົນເຫຼົ່ານີ້ຮຽກວ່າ ຜູ້ມີປົກກະຕິເຮັດໃຫ້ບໍລິບູນໃນສິນ ເຮັດໃຫ້ພໍປະມານໃນສະມາທິ ເຮັດໃຫ້ພໍປະມານໃນປັນຍາ

[໑໘໘] ບຸກຄົນຜູ້ມີປົກກະຕິເຮັດໃຫ້ບໍລິບູນໃນສິນ ເຮັດໃຫ້ບໍລິບູນໃນສະມາທິ ເຮັດໃຫ້ພໍປະມານໃນປັນຍາ ເປັນແນວໃດ?

ບຸກຄົນຜູ້ເປັນອະນາຄາມີ ບຸກຄົນນີ້ຮຽກວ່າ ຜູ້ມີປົກກະຕິເຮັດໃຫ້ບໍລິບູນໃນສິນ ເຮັດໃຫ້ບໍລິບູນໃນສະມາທິ ເຮັດໃຫ້ພໍປະມານໃນປັນຍາ

[໑໘໙] ບຸກຄົນຜູ້ມີປົກກະຕິເຮັດໃຫ້ບໍລິບູນໃນສິນ ເຮັດໃຫ້ບໍລິບູນໃນສະມາທິ ເຮັດໃຫ້ບໍລິບູນໃນປັນຍາ ເປັນແນວໃດ?

ບຸກຄົນຜູ້ເປັນອະຣະຫັນ ບຸກຄົນນີ້ຮຽກວ່າ ຜູ້ມີປົກກະຕິເຮັດໃຫ້ບໍລິບູນໃນສິນ ເຮັດໃຫ້ບໍລິບູນໃນສະມາທິ ເຮັດໃຫ້ບໍລິບູນໃນປັນຍາ

[໑໙໐] ໃນບົດມາຕິການັ້ນ ບຸກຄົນຜູ້ເປັນສາດສະດາ ໓ ຈຳພວກ ເປັນແນວໃດ?

ສາດສະດາບາງຄົນໃນໂລກນີ້ບັນຍັດການລະກາມ ແຕ່ບໍ່ບັນຍັດການລະຮູບບໍ່ບັນຍັດການລະເວທະນາ ສາດສະດາບາງຄົນໃນໂລກນີ້ບັນຍັດການລະກາມແລະບັນຍັດການລະຮູບ ແຕ່ບໍ່ບັນຍັດການລະເວທະນາ ສາດສະດາບາງຄົນໃນໂລກນີ້ບັນຍັດການລະກາມ ບັນຍັດການລະຮູບແລະບັນຍັດການລະເວທະນາ ບັນດາສາດສະດາເຫຼົ່ານັ້ນ ສາດສະດາທີ່ບັນຍັດການລະກາມ ແຕ່ບໍ່ບັນຍັດການລະຮູບ ບໍ່ບັນຍັດການລະເວທະນາ ດ້ວຍການບັນຍັດນັ້ນເພິ່ງເຫັນສາດສະດາຜູ້ໄດ້ຮູບປາວະຈອນສະມາບັດ ບັນດາສາດສະດາເຫຼົ່ານັ້ນ ສາດສະດາທີ່ບັນຍັດການລະກາມແລະບັນຍັດການລະຮູບ ແຕ່ບໍ່ບັນຍັດການລະເວທະນາດ້ວຍການບັນຍັດນັ້ນເພິ່ງເຫັນສາດສະດາຜູ້ໄດ້ອະຮູບສະມາບັດ ບັນດາສາດສະດາເຫຼົ່ານັ້ນ ສາດສະດາທີ່ບັນຍັດການລະກາມ ບັນຍັດການລະຮູບ ແລະບັນຍັດການລະເວທະນາ ດ້ວຍການບັນຍັດນັ້ນເພິ່ງເຫັນວ່າ ເປັນສາດສະດາຜູ້ຕັດສະຣູ້ເອງໂດຍຊອບ ບຸກຄົນຜູ້ເປັນສາດສະດາ ໓ ຈຳພວກເຫຼົ່ານີ້ແລ

[໑໓໑] ບັນດາບຸກຄົນເຫຼົ່ານັ້ນ ບຸກຄົນຜູ້ເປັນສາດສະດາ ໓ ຈຳພວກແມ່ນອື່ນອີກ ເປັນແນວໃດ?

ສາດສະດາບາງຄົນໃນໂລກນີ້ ບັນຍັດອັດຕາໃນປັດຈຸບັນໂດຍຄວາມເປັນຂອງມີຈິງ ໂດຍຄວາມເປັນຂອງຍັ່ງຍືນ ແລະບັນຍັດອັດຕາໃນພົບໜ້າໂດຍຄວາມເປັນຂອງມີຈິງ ໂດຍຄວາມເປັນຂອງຍັ່ງຍືນ ສ່ວນສາດສະດາບາງຄົນໃນໂລກນີ້ບັນຍັດອັດຕາໃນປັດຈຸບັນໂດຍຄວາມເປັນຂອງມີຈິງ ໂດຍຄວາມເປັນຂອງຍັ່ງຍືນ ແຕ່ບໍ່ບັນຍັດອັດຕາໃນພົບໜ້າ ໂດຍຄວາມເປັນຂອງມີຈິງ ໂດຍຄວາມເປັນຂອງຍັ່ງຍືນ ແລະສາດສະດາບາງຄົນໃນໂລກນີ້ບໍ່ບັນຍັດອັດຕາໃນປັດຈຸບັນໂດຍຄວາມເປັນຂອງມີຈິງ ໂດຍຄວາມເປັນຂອງຍັ່ງຍືນ ແລະບໍ່ບັນຍັດອັດຕາໃນພົບໜ້າໂດຍຄວາມເປັນຂອງມີຈິງ ໂດຍຄວາມເປັນຂອງຍັ່ງຍືນ ບັນດາສາດສະດາເຫຼົ່ານັ້ນ ສາດສະດາທີ່ບັນຍັດອັດຕາໂດຍຄວາມເປັນຂອງມີຈິງ ໂດຍຄວາມເປັນຂອງຍັ່ງຍືນ ແລະບັນຍັດອັດຕາໃນພົບໜ້າໂດຍຄວາມເປັນຂອງມີຈິງ ໂດຍຄວາມເປັນຂອງຍັ່ງຍືນ ດ້ວຍການບັນຍັດນັ້ນເພິ່ງເຫັນວ່າ ເປັນສາດສະດາຜູ້ມີວາທະວ່າທ່ຽງ ບັນດາສາດສະດາເຫຼົ່ານັ້ນ ສາດສະດາຜູ້ທີ່ບັນຍັດອັດຕາໃນປັດຈຸບັນໂດຍຄວາມເປັນຂອງມີຈິງ ໂດຍຄວາມເປັນຂອງຍັ່ງຍືນ ແຕ່ບໍ່ບັນຍັດອັດຕາໃນພົບໜ້າໂດຍຄວາມເປັນຂອງມີຈິງ ໂດຍຄວາມເປັນຂອງຍັ່ງຍືນ ດ້ວຍການບັນຍັດນັ້ນເພິ່ງເຫັນວ່າເປັນສາດສະດາຜູ້ມີວາທະວ່າຂາດສູນ ສາດສະດາຜູ້ທີ່ບໍ່ບັນຍັດອັດຕາໃນປັດຈຸບັນໂດຍຄວາມເປັນຂອງມີຈິງ ໂດຍຄວາມເປັນຂອງຍັ່ງຍືນ ແລະບໍ່ບັນຍັດອັດຕາໃນພົບໜ້າໂດຍຄວາມເປັນຂອງມີຈິງ ໂດຍຄວາມເປັນຂອງຍັ່ງຍືນ ດ້ວຍການບັນຍັດນັ້ນເພິ່ງເຫັນວ່າ ເປັນສາດສະດາຜູ້ຕັດສະຣູ້ເອງໂດຍຊອບ ບຸກຄົນຜູ້ເປັນສາດສະດາ ໓ ຈຳພວກແມ່ນອື່ນອີກ

**ຕິກະນິດເທດ ຈົບ**

# ໔. ຈະຕຸກກະປຸກຄະລະບັນຍັດ

[໑໓໘] ບຸກຄົນຜູ້ເປັນອະສັດຕະບຸຣຸດ ເປັນແນວໃດ?

ບຸກຄົນບາງຄົນໃນໂລກນີ້ເປັນຜູ້ຂ້າສັດ ລັກຊັບ ປະພຶດຜິດໃນກາມ ເວົ້າຕົວະ ເສບຂອງມຶນເມົາຄືສຸຣາແລະເມໄຣອັນເປັນເຫດແຫ່ງຄວາມຜະໝາດ ບຸກຄົນນີ້ຮຽກວ່າ ຜູ້ເປັນອະສັດຕະບຸຣຸດ

[໑໓໙] ບຸກຄົນຜູ້ເປັນອະສັດຕະບຸຣຸດທີ່ຍິ່ງກວ່າອະສັດຕະບຸຣຸດ ເປັນແນວໃດ?

ບຸກຄົນບາງຄົນໃນໂລກນີ້ຕົນເອງເປັນຜູ້ຂ້າສັດ ແລະຊັກຊວນຜູ້ອື່ນໃຫ້ຂ້າສັດ ຕົນເອງເປັນຜູ້ລັກຊັບແລະຊັກຊວນຜູ້ອື່ນໃຫ້ລັກຊັບ ຕົນເອງເປັນຜູ້ປະພຶດຜິດໃນກາມແລະຊັກຊວນຜູ້ອື່ນໃຫ້ປະພຶດຜິດໃນກາມ ຕົນເອງເປັນຜູ້ເວົ້າຕົວະແລະຊັກຊວນຜູ້ອື່ນໃຫ້ເວົ້າຕົວະ ຕົນເອງເປັນຜູ້ເສບຂອງມຶນເມົາຄືສຸຣາແລະເມໄຣອັນເປັນເຫດແຫ່ງຄວາມຜະໝາດ ແລະຊັກຊວນຜູ້ອື່ນໃຫ້ເສບຂອງມຶນເມົາຄືສຸຣາແລະເມໄຣອັນເປັນເຫດແຫ່ງຄວາມຜະໝາດ ບຸກຄົນນີ້ຮຽກວ່າ ຜູ້ເປັນອະສັດຕະບຸຣຸດທີ່ຍິ່ງກວ່າອະສັດຕະບຸຣຸດ

[໑໔໐] ບຸກຄົນຜູ້ເປັນສັດຕະບຸຣຸດ ເປັນແນວໃດ?

ບຸກຄົນບາງຄົນໃນໂລກນີ້ເປັນຜູ້ເວັ້ນຂາດຈາກການຂ້າສັດ ເປັນຜູ້ເວັ້ນຂາດຈາກການລັກຊັບ ເປັນຜູ້ເວັ້ນຂາດຈາກການປະພຶດຜິດໃນກາມ ເປັນຜູ້ເວັ້ນຂາດຈາກການເວົ້າຕົວະ ເປັນຜູ້ເວັ້ນຂາດຈາກການເສບຂອງມຶນເມົາຄືສຸຣາແລະເມໄຣອັນເປັນເຫດແຫ່ງຄວາມຜະໝາດ ບຸກຄົນນີ້ຮຽກວ່າ ຜູ້ເປັນສັດຕະບຸຣຸດ

[໑໔໑] ບຸກຄົນຜູ້ເປັນສັດຕະບຸຣຸດທີ່ຍິ່ງກວ່າສັດຕະບຸຣຸດ ເປັນແນວໃດ?

ບຸກຄົນບາງຄົນໃນໂລກນີ້ຕົນເອງເປັນຜູ້ເວັ້ນຂາດຈາກການຂ້າສັດແລະຊັກຊວນຜູ້ອື່ນໃຫ້ເວັ້ນຂາດຈາກການຂ້າສັດ ຕົນເອງເປັນຜູ້ເວັ້ນຂາດຈາກການລັກຊັບແລະຊັກຊວນຜູ້ອື່ນໃຫ້ເວັ້ນຂາດຈາກການລັກຊັບ ຕົນເອງເປັນຜູ້ເວັ້ນຂາດຈາກການປະພຶດຜິດໃນກາມ ແລະຊັກຊວນຜູ້ອື່ນໃຫ້ເວັ້ນຂາດຈາກການປະພຶດຜິດໃນກາມ ຕົນເອງເປັນຜູ້ເວັ້ນຂາດຈາກການເວົ້າຕົວະແລະ ຊັກຊວນຜູ້ອື່ນໃຫ້ເວັ້ນຂາດຈາກການເວົ້າຕົວະ ຕົນເອງເປັນຜູ້ເວັ້ນຂາດຈາກການເສບຂອງມຶນເມົາຄືສຸຣາ ແລະເມໄຣອັນເປັນເຫດແຫ່ງຄວາມຜະໝາດ ແລະຊັກຊວນຜູ້ອື່ນໃຫ້ເວັ້ນຂາດຈາກການເສບຂອງມຶນເມົາຄືສຸຣາແລະເມໄຣອັນເປັນເຫດແຫ່ງຄວາມຜະໝາດ ບຸກຄົນນີ້ຮຽກວ່າ ຜູ້ເປັນສັດຕະບຸຣຸດທີ່ຍິ່ງກວ່າສັດຕະບຸຣຸດ

[໑໔໒] ບຸກຄົນຜູ້ເປັນຄົນຊົ່ວ ເປັນແນວໃດ?

ບຸກຄົນບາງຄົນໃນໂລກນີ້ເປັນຜູ້ຂ້າສັດ ລັກຊັບ ປະພຶດຜິດໃນກາມ ເວົ້າຕົວະ ເວົ້າສັບສໍ່

ເວົ້າຄຳຫຍາບ ເວົ້າເພີ້ເຈີ້ ໂລບຢາກໄດ້ຂອງຜູ້ອື່ນ ມີຈິດພະຍາບາດ ເປັນມິດສາທິດຖິ ບຸກຄົນນີ້ຮຽກວ່າ ຜູ້ເປັນຄົນຊົ່ວ

[໑໓໗] ບຸກຄົນຜູ້ເປັນຄົນຊົ່ວທີ່ຍິ່ງກວ່າຄົນຊົ່ວ ເປັນແນວໃດ?

ບຸກຄົນບາງຄົນໃນໂລກນີ້ຕົນເອງເປັນຜູ້ຂ້າສັດ ແລະຊັກຊວນຜູ້ອື່ນໃຫ້ຂ້າສັດ ຕົນເອງເປັນຜູ້ລັກຊັບແລະຊັກຊວນຜູ້ອື່ນໃຫ້ລັກຊັບ ຕົນເອງເປັນຜູ້ປະພຶດຜິດໃນກາມແລະຊັກຊວນຜູ້ອື່ນໃຫ້ປະພຶດຜິດໃນກາມ ຕົນເອງເປັນຜູ້ເວົ້າຕົວະແລະຊັກຊວນຜູ້ອື່ນໃຫ້ເວົ້າຕົວະ ຕົນເອງເປັນຜູ້ເວົ້າສັບສໍ່ແລະຊັກຊວນຜູ້ອື່ນໃຫ້ເວົ້າສັບສໍ່ ຕົນເອງເປັນຜູ້ເວົ້າຄຳຫຍາບແລະຊັກຊວນ ຜູ້ອື່ນໃຫ້ເວົ້າຄຳຫຍາບ ຕົນເອງເປັນຜູ້ເວົ້າເພີ້ເຈີ້ແລະຊັກຊວນຜູ້ອື່ນໃຫ້ເວົ້າເພີ້ເຈີ້ ຕົນເອງເປັນຜູ້ໂລບຢາກໄດ້ຂອງຜູ້ອື່ນແລະຊັກຊວນຜູ້ອື່ນໃຫ້ໂລບຢາກໄດ້ຂອງຜູ້ອື່ນ ຕົນເອງເປັນຜູ້ມີຈິດພະຍາບາດແລະຊັກຊວນຜູ້ອື່ນໃຫ້ມີຈິດພະຍາບາດ ຕົນເອງເປັນມິດສາທິດຖິແລະຊັກຊວນຜູ້ອື່ນໃຫ້ເປັນມິດສາທິດຖິ ບຸກຄົນນີ້ຮຽກວ່າ ຜູ້ເປັນຄົນຊົ່ວທີ່ຍິ່ງກວ່າຄົນຊົ່ວ

[໑໓໘] ບຸກຄົນຜູ້ເປັນຄົນດີ ເປັນແນວໃດ?

ບຸກຄົນບາງຄົນໃນໂລກນີ້ເປັນຜູ້ເວັ້ນຂາດຈາກການຂ້າສັດ ເປັນຜູ້ເວັ້ນຂາດຈາກການລັກຊັບ ເປັນຜູ້ເວັ້ນຂາດຈາກການປະພຶດຜິດໃນກາມ ເປັນຜູ້ເວັ້ນຂາດຈາກການເວົ້າຕົວະ ເປັນຜູ້ເວັ້ນຂາດຈາກການເວົ້າສັບສໍ່ ເປັນຜູ້ເວັ້ນຂາດຈາກການເວົ້າຄຳຫຍາບ ເປັນຜູ້ເວັ້ນຂາດຈາກການເວົ້າເພີ້ເຈີ້ ເປັນຜູ້ບໍ່ໂລບຢາກໄດ້ຂອງຜູ້ອື່ນ ເປັນຜູ້ມີຈິດບໍ່ພະຍາບາດ ເປັນສຳມາທິດຖິ ບຸກຄົນນີ້ຮຽກວ່າ ຜູ້ເປັນຄົນດີ

[໑໓໙] ບຸກຄົນຜູ້ເປັນຄົນດີທີ່ຍິ່ງກວ່າຄົນດີ ເປັນແນວໃດ?

ບຸກຄົນບາງຄົນໃນໂລກນີ້ຕົນເອງເປັນຜູ້ເວັ້ນຂາດຈາກການຂ້າສັດ ແລະຊັກຊວນຜູ້ອື່ນໃຫ້ເວັ້ນຂາດຈາກການຂ້າສັດ ຕົນເອງເປັນຜູ້ເວັ້ນຂາດຈາກການລັກຊັບແລະຊັກຊວນຜູ້ອື່ນໃຫ້ເວັ້ນຂາດຈາກການລັກຊັບ ຕົນເອງເປັນຜູ້ເວັ້ນຂາດຈາກການປະພຶດຜິດໃນກາມ ແລະຊັກຊວນຜູ້ອື່ນໃຫ້ເວັ້ນຂາດຈາກການປະພຶດຜິດໃນກາມ ຕົນເອງເປັນຜູ້ເວັ້ນຂາດຈາກການເວົ້າຕົວະແລະຊັກຊວນຜູ້ອື່ນໃຫ້ເວັ້ນຂາດຈາກການເວົ້າຕົວະ ຕົນເອງເປັນຜູ້ເວັ້ນຂາດຈາກການເວົ້າສັບສໍ່ແລະຊັກຊວນຜູ້ອື່ນໃຫ້ເວັ້ນຂາດຈາກການເວົ້າສັບສໍ່ ຕົນເອງເປັນຜູ້ເວັ້ນຂາດຈາກການເວົ້າຄຳຫຍາບ ແລະຊັກຊວນຜູ້ອື່ນໃຫ້ເວັ້ນຂາດຈາກການເວົ້າຄຳຫຍາບ ຕົນເອງເປັນຜູ້ເວັ້ນຂາດຈາກການເວົ້າເພີ້ເຈີ້ ແລະຊັກຊວນຜູ້ອື່ນໃຫ້ເວັ້ນຂາດຈາກການເວົ້າເພີ້ເຈີ້ ຕົນເອງເປັນຜູ້ບໍ່ໂລບຢາກໄດ້ຂອງຜູ້ອື່ນແລະຊັກຊວນຜູ້ອື່ນບໍ່ໃຫ້ໂລບຢາກໄດ້ຂອງຜູ້ອື່ນ ຕົນເອງເປັນຜູ້ມີຈິດບໍ່ພະຍາບາດແລະຊັກຊວນຜູ້ອື່ນບໍ່ໃຫ້ມີຈິດພະຍາບາດ ຕົນເອງເປັນສຳມາທິດຖິແລະຊັກຊວນຜູ້ອື່ນໃຫ້ເປັນສຳມາທິດຖິ ບຸກຄົນນີ້ຮຽກວ່າ ຜູ້ເປັນຄົນດີທີ່ຍິ່ງກວ່າຄົນດີ

[໑໘໐] ບຸກຄົນຜູ້ມີທຳຊົ່ວ ເປັນແນວໃດ?

ບຸກຄົນບາງຄົນໃນໂລກນີ້ເປັນຜູ້ຂ້າສັດ ລັກຊັບ ຯລຯ ເປັນມິດສາທິດຖິ ບຸກຄົນ ນີ້ຮຽກວ່າ ຜູ້ມີທຳຊົ່ວ

[໑໘໑] ບຸກຄົນຜູ້ມີທຳຊົ່ວທີ່ຍິ່ງກວ່າບຸກຄົນຜູ້ມີທຳຊົ່ວ ເປັນແນວໃດ?

ບຸກຄົນບາງຄົນໃນໂລກນີ້ຕົນເອງເປັນຜູ້ຂ້າສັດ ແລະຊັກຊວນຜູ້ອື່ນໃຫ້ຂ້າສັດ ຕົນເອງເປັນຜູ້ລັກຊັບແລະຊັກຊວນຜູ້ອື່ນໃຫ້ລັກຊັບ ຯລຯ ຕົນເອງເປັນມິດສາທິດຖິແລະຊັກຊວນ ຜູ້ອື່ນໃຫ້ເປັນມິດສາທິດຖິ ບຸກຄົນນີ້ຮຽກວ່າ ຜູ້ມີທຳຊົ່ວທີ່ຍິ່ງກວ່າບຸກຄົນຜູ້ມີທຳຊົ່ວ

[໑໘໒] ບຸກຄົນຜູ້ມີທຳດີ ເປັນແນວໃດ?

ບຸກຄົນບາງຄົນໃນໂລກນີ້ເປັນຜູ້ເວັ້ນຂາດຈາກການຂ້າສັດ ເປັນຜູ້ເວັ້ນຂາດຈາກການລັກຊັບ ຯລຯ ເປັນສຳມາທິດຖິ ບຸກຄົນນີ້ຮຽກວ່າ ຜູ້ມີທຳດີ

[໑໘໓] ບຸກຄົນຜູ້ມີທຳດີທີ່ຍິ່ງກວ່າບຸກຄົນຜູ້ມີທຳດີ ເປັນແນວໃດ?

ບຸກຄົນບາງຄົນໃນໂລກນີ້ຕົນເອງເປັນຜູ້ເວັ້ນຂາດຈາກການຂ້າສັດ ແລະຊັກຊວນຜູ້ອື່ນໃຫ້ເວັ້ນຂາດຈາກການຂ້າສັດ ຯລຯ ຕົນເອງເປັນສຳມາທິດຖິແລະຊັກຊວນຜູ້ອື່ນໃຫ້ເປັນສຳມາທິດຖິ ບຸກຄົນນີ້ຮຽກວ່າ ຜູ້ມີທຳດີທີ່ຍິ່ງກວ່າບຸກຄົນຜູ້ມີທຳດີ

[໑໘໔] ບຸກຄົນຜູ້ມີແຕ່ໂທດ ເປັນແນວໃດ?

ບຸກຄົນບາງຄົນໃນໂລກນີ້ປະກອບດ້ວຍກາຍຍະກຳທີ່ມີໂທດ ປະກອບດ້ວຍວະຈີກຳທີ່ມີໂທດ ປະກອບດ້ວຍມະໂນກຳທີ່ມີໂທດ ບຸກຄົນນີ້ຮຽກວ່າ ຜູ້ມີແຕ່ໂທດ

[໑໘໕] ບຸກຄົນຜູ້ມີໂທດເປັນສ່ວນຫຼາຍ ເປັນແນວໃດ?

ບຸກຄົນບາງຄົນໃນໂລກນີ້ປະກອບດ້ວຍກາຍຍະກຳທີ່ມີໂທດເປັນສ່ວນຫຼາຍ ບໍ່ມີໂທດເປັນສ່ວນໜ້ອຍ ປະກອບດ້ວຍວະຈີກຳທີ່ມີໂທດເປັນສ່ວນຫຼາຍ ບໍ່ມີໂທດເປັນສ່ວນໜ້ອຍ ປະກອບດ້ວຍມະໂນກຳທີ່ມີໂທດເປັນສ່ວນຫຼາຍ ບໍ່ມີໂທດເປັນສ່ວນໜ້ອຍ ບຸກຄົນນີ້ຮຽກວ່າ ຜູ້ມີໂທດເປັນສ່ວນຫຼາຍ

[໑໘໖] ບຸກຄົນຜູ້ມີໂທດເປັນສ່ວນໜ້ອຍ ເປັນແນວໃດ?

ບຸກຄົນບາງຄົນໃນໂລກນີ້ປະກອບດ້ວຍກາຍຍະກຳທີ່ບໍ່ມີໂທດເປັນສ່ວນຫຼາຍມີໂທດເປັນສ່ວນໜ້ອຍ ປະກອບດ້ວຍວະຈີກຳທີ່ບໍ່ມີໂທດເປັນສ່ວນຫຼາຍ ມີໂທດເປັນສ່ວນໜ້ອຍ ປະກອບດ້ວຍມະໂນກຳທີ່ບໍ່ມີໂທດເປັນສ່ວນຫຼາຍ ມີໂທດເປັນສ່ວນໜ້ອຍ ບຸກຄົນນີ້ຮຽກວ່າ ຜູ້ມີໂທດເປັນສ່ວນໜ້ອຍ

[໑໔໗] ບຸກຄົນຜູ້ບໍ່ມີໂທດ ເປັນແນວໃດ?

ບຸກຄົນບາງຄົນໃນໂລກນີ້ປະກອບດ້ວຍກາຍຍະກຳທີ່ບໍ່ມີໂທດ ປະກອບດ້ວຍວະຈີກຳທີ່ບໍ່ມີໂທດ ປະກອບດ້ວຍມະໂນກຳທີ່ບໍ່ມີໂທດ ບຸກຄົນນີ້ຮຽກວ່າ ຜູ້ບໍ່ມີໂທດ

[໑໔໘] ບຸກຄົນຜູ້ເປັນອຸກຄະຕິຕັນຍູ ເປັນແນວໃດ?

ບຸກຄົນໃດບັນລຸທຳພ້ອມກັບເວລາທີ່ທ່ານຍົກຫົວຂໍ້ຂຶ້ນສະແດງ ບຸກຄົນນີ້ຮຽກວ່າ ຜູ້ເປັນອຸກຄະຕິຕັນຍູ

[໑໔໙] ບຸກຄົນຜູ້ເປັນວິປະຈິຕັນຍູ ເປັນແນວໃດ?

ບຸກຄົນໃດເມື່ອເຂົາອະທິບາຍເນື້ອຄວາມແຫ່ງພາສິດໂດຍຫຍໍ້ໃຫ້ພິດສະດານ ຈຶ່ງບັນລຸທຳ ບຸກຄົນນີ້ຮຽກວ່າ ຜູ້ເປັນວິປະຈິຕັນຍູ

[໑໕໐] ບຸກຄົນຜູ້ເປັນເນີຍຍະ ເປັນແນວໃດ?

ບຸກຄົນໃດບັນລຸທຳໂດຍລຳດັບແນວນີ້ ຄື ໂດຍການສະແດງ ການຖາມ ການມະນະສິການໂດຍແຍບຄາຍ ການເສບ ການຄົບ ການເຂົ້າໄປນັ່ງໃກ້ກັນລະຍານະມິດ ບຸກຄົນນີ້ຮຽກວ່າ ຜູ້ເປັນເນີຍຍະ

[໑໕໑] ບຸກຄົນຜູ້ເປັນປະທະປະຣະມະ ເປັນແນວໃດ?

ບຸກຄົນໃດຟັງກໍຫຼາຍ ກ່າວກໍຫຼາຍ ຊົງຈຳກໍຫຼາຍ ບອກສອນກໍຫຼາຍ ແຕ່ບໍ່ໄດ້ບັນລຸທຳໃນຊາດນັ້ນ ບຸກຄົນນີ້ຮຽກວ່າ ຜູ້ເປັນປະທະປະຣະມະ

[໑໕໒] ບຸກຄົນຜູ້ຕອບໄດ້ຖືກຕ້ອງແຕ່ບໍ່ວ່ອງໄວ ເປັນແນວໃດ?

ບຸກຄົນບາງຄົນໃນໂລກນີ້ຖືກຖາມບັນຫາຍ່ອມຕອບໄດ້ຖືກຕ້ອງແຕ່ບໍ່ວ່ອງໄວ ບຸກຄົນນີ້ຮຽກວ່າ ຜູ້ຕອບໄດ້ຖືກຕ້ອງແຕ່ບໍ່ວ່ອງໄວ

[໑໕໓] ບຸກຄົນຜູ້ຕອບໄດ້ວ່ອງໄວແຕ່ບໍ່ຖືກຕ້ອງ ເປັນແນວໃດ?

ບຸກຄົນບາງຄົນໃນໂລກນີ້ຖືກຖາມບັນຫາກໍຕອບໄດ້ວ່ອງໄວ ແຕ່ບໍ່ຖືກຕ້ອງ ບຸກຄົນນີ້ຮຽກວ່າ ຜູ້ຕອບໄດ້ວ່ອງໄວແຕ່ບໍ່ຖືກຕ້ອງ

[໑໕໔] ບຸກຄົນຜູ້ຕອບໄດ້ຖືກຕ້ອງແລະວ່ອງໄວ ເປັນແນວໃດ?

ບຸກຄົນບາງຄົນໃນໂລກນີ້ຖືກຖາມບັນຫາຍ່ອມຕອບໄດ້ຖືກຕ້ອງແລະວ່ອງໄວ ບຸກຄົນນີ້ຮຽກວ່າ ຜູ້ຕອບໄດ້ຖືກຕ້ອງແລະວ່ອງໄວ

[໑໕໕] ບຸກຄົນຜູ້ຕອບໄດ້ບໍ່ຖືກຕ້ອງແລະບໍ່ວ່ອງໄວ ເປັນແນວໃດ?

ບຸກຄົນບາງຄົນໃນໂລກນີ້ຖືກຖາມບັນຫາຍ່ອມຕອບໄດ້ບໍ່ຖືກຕ້ອງແລະບໍ່ວ່ອງໄວ ບຸກຄົນນີ້ຮຽກວ່າ ຜູ້ຕອບໄດ້ບໍ່ຖືກຕ້ອງແລະບໍ່ວ່ອງໄວ

[໑໕໖] ໃນບົດມາຕິການັ້ນ ບຸກຄົນຜູ້ເປັນທຳມະກະຖຶກ ໔ ຈຳພວກ[1] ເປັນແນວໃດ?

໑. ທຳມະກະຖຶກບາງຄົນໃນທຳວິໄນນີ້ກ່າວທຳໜ້ອຍແລະບໍ່ມີປະໂຫຍດ ທັງໝູ່ຜູ້ຟັງກໍບໍ່ສະຫຼາດໃນເລື້ອງທີ່ມີປະໂຫຍດແລະບໍ່ມີປະໂຫຍດ ທຳມະກະຖຶກເຊັ່ນນີ້ນັບວ່າເປັນທຳມະກະຖຶກສຳລັບຜູ້ຟັງເຊັ່ນນີ້ຄືກັນ

໒. ທຳມະກະຖຶກບາງຄົນໃນທຳວິໄນນີ້ ກ່າວທຳໜ້ອຍແຕ່ມີປະໂຫຍດແລະໝູ່ຜູ້ຟັງກໍເປັນຜູ້ສະຫຼາດໃນເລື້ອງທີ່ມີປະໂຫຍດແລະບໍ່ມີປະໂຫຍດ ທຳມະກະຖຶກເຊັ່ນນີ້ນັບວ່າເປັນທຳມະກະຖຶກສຳລັບໝູ່ຜູ້ຟັງເຊັ່ນນີ້ຄືກັນ

໓. ທຳມະກະຖຶກບາງຄົນໃນທຳວິໄນນີ້ກ່າວທຳຫຼາຍແຕ່ບໍ່ມີປະໂຫຍດ ແລະໝູ່ຜູ້ຟັງກໍເປັນຜູ້ບໍ່ສະຫຼາດໃນເລື້ອງທີ່ມີປະໂຫຍດແລະບໍ່ມີປະໂຫຍດ ທຳມະກະຖຶກເຊັ່ນນີ້ນັບວ່າເປັນທຳມະກະຖຶກສຳລັບໝູ່ຜູ້ຟັງເຊັ່ນນີ້ຄືກັນ

໔. ທຳມະກະຖຶກບາງຄົນໃນທຳວິໄນນີ້ກ່າວທຳຫຼາຍແລະມີປະໂຫຍດ ແລະໝູ່ຜູ້ຟັງກໍເປັນຜູ້ສະຫຼາດໃນເລື້ອງທີ່ມີປະໂຫຍດແລະບໍ່ມີປະໂຫຍດ ທຳມະກະຖຶກເຊັ່ນນີ້ນັບວ່າເປັນທຳມະກະຖຶກສຳລັບໝູ່ຜູ້ຟັງເຊັ່ນນີ້ຄືກັນ

ບຸກຄົນຜູ້ເປັນທຳມະກະຖຶກ ໔ ຈຳພວກເຫຼົ່ານີ້

[໑໕໗] ໃນບົດມາຕິການັ້ນ ບຸກຄົນປຽບເໝືອນເມກ ໔ ຈຳພວກ ເປັນແນວໃດ?

ເມກ ໔ ຊະນິດ ຄື

໑. ເມກທີ່ຄຳຣາມແຕ່ບໍ່ເຮັດໃຫ້ຝົນຕົກ
໒. ເມກທີ່ເຮັດໃຫ້ຝົນຕົກແຕ່ບໍ່ຄຳຣາມ
໓. ເມກທີ່ຄຳຣາມແລະໃຫ້ຝົນຕົກ
໔. ເມກທີ່ບໍ່ຄຳຣາມແລະບໍ່ເຮັດໃຫ້ຝົນຕົກ

ບຸກຄົນປຽບເໝືອນເມກ ໔ ຈຳພວກມີຜາກົດຢູ່ໃນໂລກແນວນີ້ຄືກັນ
ບຸກຄົນ ໔ ຈຳພວກ ເປັນແນວໃດ?

໑. ບຸກຄົນປຽບເໝືອນເມກທີ່ຄຳຣາມແຕ່ບໍ່ເຮັດໃຫ້ຝົນຕົກ

໒. ບຸກຄົນປຽບເໝືອນເມກທີ່ເຮັດໃຫ້ຝົນຕົກແຕ່ບໍ່ຄຳຣາມ
໓. ບຸກຄົນປຽບເໝືອນເມກທີ່ຄຳຣາມແລະເຮັດໃຫ້ຝົນຕົກ
໔. ບຸກຄົນປຽບເໝືອນເມກທີ່ບໍ່ຄຳຣາມແລະບໍ່ເຮັດໃຫ້ຝົນຕົກ

ບຸກຄົນປຽບເໝືອນເມກທີ່ຄຳຣາມແຕ່ບໍ່ເຮັດໃຫ້ຝົນຕົກ ເປັນແນວໃດ?

ບຸກຄົນບາງຄົນໃນໂລກນີ້ມັກເວົ້າແຕ່ບໍ່ເຮັດ ບຸກຄົນເຊັ່ນນີ້ປຽບເໝືອນເມກທີ່ຄຳຣາມ ແຕ່ບໍ່ເຮັດໃຫ້ຝົນຕົກ ບຸກຄົນປະເພດນີ້ຈຶ່ງປຽບເໝືອນເມກທີ່ຄຳຣາມແຕ່ບໍ່ເຮັດໃຫ້ຝົນຕົກ (໑)

ບຸກຄົນປຽບເໝືອນເມກທີ່ເຮັດໃຫ້ຝົນຕົກແຕ່ບໍ່ຄຳຣາມ ເປັນແນວໃດ?

ບຸກຄົນບາງຄົນໃນໂລກນີ້ມັກເຮັດແຕ່ບໍ່ເວົ້າ ບຸກຄົນເຊັ່ນນີ້ປຽບເໝືອນເມກທີ່ເຮັດໃຫ້ຝົນຕົກແຕ່ບໍ່ຄຳຣາມ ບຸກຄົນປະເພດນີ້ຈຶ່ງປຽບເໝືອນເມກທີ່ເຮັດໃຫ້ຝົນຕົກແຕ່ບໍ່ຄຳຣາມ (໒)

ບຸກຄົນປຽບເໝືອນເມກທີ່ຄຳຣາມແລະໃຫ້ຝົນຕົກ ເປັນແນວໃດ?

ບຸກຄົນບາງຄົນໃນໂລກນີ້ມັກເວົ້າແລະມັກເຮັດ ບຸກຄົນເຊັ່ນນີ້ປຽບເໝືອນເມກທີ່ຄຳຣາມແລະເຮັດໃຫ້ຝົນຕົກ ບຸກຄົນປະເພດນີ້ຈຶ່ງປຽບເໝືອນເມກທີ່ຄຳຣາມແລະເຮັດໃຫ້ຝົນຕົກ (໓)

ບຸກຄົນປຽບເໝືອນເມກທີ່ບໍ່ຄຳຣາມແລະບໍ່ເຮັດໃຫ້ຝົນຕົກ ເປັນແນວໃດ?

ບຸກຄົນບາງຄົນໃນໂລກນີ້ບໍ່ເວົ້າແລະບໍ່ເຮັດບຸກຄົນເຊັ່ນນີ້ປຽບເໝືອນເມກທີ່ບໍ່ຄຳຣາມແລະບໍ່ເຮັດໃຫ້ຝົນຕົກ ບຸກຄົນປະເພດນີ້ຈຶ່ງປຽບເໝືອນເມກທີ່ບໍ່ຄຳຣາມແລະບໍ່ເຮັດໃຫ້ຝົນຕົກ (໔)

ບຸກຄົນປຽບເໝືອນເມກ ໔ ຈຳພວກເຫຼົ່ານີ້ມີຜາກົດຢູ່ໃນໂລກແນວນີ້ຄືກັນ

[໑໕໗] ໃນບົດມາຕິການັ້ນ ບຸກຄົນປຽບເໝືອນໜູ ໔ ຈຳພວກ ເປັນແນວໃດ?

ໜູ ໔ ຈຳພວກ ຄື

໑. ໜູຂຸດຮູແຕ່ບໍ່ຢູ່ ໒. ໜູຢູ່ແຕ່ບໍ່ຂຸດຮູ
໓. ໜູຂຸດຮູແລະຢູ່ ໔. ໜູບໍ່ຂຸດຮູແລະບໍ່ຢູ່

ບຸກຄົນປຽບເໝືອນໜູ ໔ ຈຳພວກເຫຼົ່ານີ້ມີຜາກົດຢູ່ໃນໂລກແນວນີ້ຄືກັນ

ບຸກຄົນປຽບເໝືອນໜູ ໔ ຈຳພວກ ເປັນແນວໃດ?

໑. ບຸກຄົນປຽບເໝືອນໜູຂຸດຮູແຕ່ບໍ່ຢູ່
໒. ບຸກຄົນປຽບເໝືອນໜູຢູແຕ່ບໍ່ຂຸດຮູ
໓. ບຸກຄົນປຽບເໝືອນໜູຂຸດຮູແລະຢູ່
໔. ບຸກຄົນປຽບເໝືອນໜູບໍ່ຂຸດຮູແລະບໍ່ຢູ່

ບຸກຄົນປຽບເໝືອນໜູຂຸດຮູແຕ່ບໍ່ຢູ່ ເປັນແນວໃດ?

ບຸກຄົນບາງຄົນໃນໂລກນີ້ຮຽນທຳ ຄື ສຸດຕະ ເຄີຍຍະ ເວີຍຍາກະຣະນະ ຄາຖາ ອຸທານ ອິຕິວຸດຕະກະ ຊາຕະກະ ອັບພູຕະທຳ ເວທັນລະ ແຕ່ເຂົາບໍ່ຮູ້ຊັດແຈ້ງຕາມຄວາມເປັນຈິງວ່າ "ນີ້ທຸກ ນີ້ເຫດເກີດແຫ່ງທຸກ ນີ້ຄວາມດັບທຸກ ນີ້ຂໍ້ປະຕິບັດໃຫ້ເຖິງຄວາມດັບທຸກ" ບຸກຄົນເຊັ່ນນີ້ປຽບເໝືອນໜູຂຸດຮູແຕ່ບໍ່ຢູ່ ບຸກຄົນປະເພດນີ້ຈຶ່ງປຽບເໝືອນໜູທີ່ຂຸດຮູແຕ່ບໍ່ຢູ່ (໑)

ບຸກຄົນປຽບເໝືອນໜູຢູ່ແຕ່ບໍ່ຂຸດຮູ ເປັນແນວໃດ?

ບຸກຄົນບາງຄົນໃນໂລກນີ້ບໍ່ຮຽນທຳ ຄື ສຸດຕະ ເຄີຍຍະ ເວີຍຍາກະຣະນະ ຄາຖາ ອຸທານ ອິຕິວຸດຕະກະ ຊາຕະກະ ອັບພູຕະທຳ ເວທັນລະ ແຕ່ເຂົາຮູ້ຊັດແຈ້ງຕາມຄວາມເປັນຈິງວ່າ "ນີ້ທຸກ ນີ້ເຫດເກີດແຫ່ງທຸກ ນີ້ຄວາມດັບທຸກ ນີ້ຂໍ້ປະຕິບັດໃຫ້ເຖິງຄວາມດັບທຸກ" ບຸກຄົນເຊັ່ນນີ້ປຽບເໝືອນໜູຢູ່ແຕ່ບໍ່ຂຸດຮູ ບຸກຄົນປະເພດນີ້ຈຶ່ງປຽບເໝືອນຫນູທີ່ຢູ່ ແຕ່ບໍ່ຂຸດຮູ (໒)

ບຸກຄົນປຽບເໝືອນໜູຂຸດຮູແລະຢູ່ ເປັນແນວໃດ?

ບຸກຄົນບາງຄົນໃນໂລກນີ້ຮຽນທຳ ຄື ສຸດຕະ ເຄີຍຍະ ເວີຍຍາກະຣະນະ ຄາຖາ ອຸທານ ອິຕິວຸດຕະກະ ຊາຕະກະ ອັບພູຕະທຳ ເວທັນລະ ແລະເຂົາຮູ້ຊັດແຈ້ງຕາມຄວາມເປັນຈິງວ່າ "ນີ້ທຸກ ນີ້ເຫດເກີດແຫ່ງທຸກ ນີ້ຄວາມດັບທຸກ ນີ້ຂໍ້ປະຕິບັດໃຫ້ເຖິງຄວາມດັບທຸກ" ບຸກຄົນເຊັ່ນນີ້ປຽບເໝືອນໜູຂຸດຮູແລະຢູ່ ບຸກຄົນປະເພດນີ້ຈຶ່ງປຽບເໝືອນໜູທີ່ຂຸດຮູແລະຢູ່ (໓)

ບຸກຄົນປຽບເໝືອນໜູບໍ່ຂຸດຮູແລະບໍ່ຢູ່ ເປັນແນວໃດ?

ບຸກຄົນບາງຄົນໃນໂລກນີ້ບໍ່ຮຽນທຳ ຄື ສຸດຕະ ເຄີຍຍະ ເວີຍຍາກະຣະນະ ຄາຖາ ອຸທານ ອິຕິວຸດຕະກະ ຊາຕະກະ ອັບພູຕະທຳ ເວທັນລະ ແລະເຂົາບໍ່ຮູ້ຊັດແຈ້ງຕາມຄວາມເປັນຈິງວ່າ "ນີ້ທຸກ ນີ້ເຫດເກີດແຫ່ງທຸກ ນີ້ຄວາມດັບທຸກ ນີ້ຂໍ້ປະຕິບັດໃຫ້ເຖິງຄວາມດັບທຸກ" ບຸກຄົນເຊັ່ນນີ້ປຽບເໝືອນໜູບໍ່ຂຸດຮູແລະບໍ່ຢູ່ ບຸກຄົນປະເພດນີ້ຈຶ່ງປຽບເໝືອນໜູທີ່ບໍ່ຂຸດຮູແລະບໍ່ຢູ່ (໔)

ບຸກຄົນປຽບເໝືອນໜູ ໔ ຈຳພວກເຫຼົ່ານີ້ມີຜາກົດຢູ່ໃນໂລກ

[໑໕໗] ໃນບົດມາຕິການັ້ນ ບຸກຄົນປຽບເໝືອນໝາກມ່ວງ ໔ ຈຳພວກ ເປັນແນວໃດ?
ໝາກມ່ວງ ໔ ຊະນິດ ຄື

໑. ໝາກມ່ວງດິບແຕ່ຜິວສຸກ
໒. ໝາກມ່ວງສຸກແຕ່ຜິວດິບ
໓. ໝາກມ່ວງດິບແລະຜິວດິບ
໔. ໝາກມ່ວງສຸກແລະຜິວສຸກ

ບຸກຄົນປຽບເໝືອນໝາກມ່ວງ ໔ ຈຳພວກເຫຼົ່ານີ້ມີຜາກົດຢູ່ໃນໂລກແນວນີ້ຄືກັນ

ບຸກຄົນ ໔ ຈຳພວກ ເປັນແນວໃດ?

໑. ບຸກຄົນປຽບເໝືອນໝາກມ່ວງດິບແຕ່ຜິວສຸກ
໒. ບຸກຄົນປຽບເໝືອນໝາກມ່ວງສຸກແຕ່ຜິວດິບ
໓. ບຸກຄົນປຽບເໝືອນໝາກມ່ວງດິບແລະຜິວດິບ
໔. ບຸກຄົນປຽບເໝືອນໝາກມ່ວງສຸກແລະຜິວສຸກ

ບຸກຄົນປຽບເໝືອນໝາກມ່ວງດິບແຕ່ຜິວສຸກ ເປັນແນວໃດ?

ບຸກຄົນບາງຄົນໃນໂລກນີ້ມີການກ້າວໄປ ການຖອຍກັບ ການແລເບິ່ງ ການຫຼຽວເບິ່ງ ການຄູ້ເຂົ້າ ການຢຽດອອກ ການຄອງສັງຄາຕິ ບາດ ແລະຈີວອນໜ້າເຫຼື້ອມໃສ ແຕ່ເຂົາບໍ່ຮູ້ຊັດແຈ້ງຕາມຄວາມເປັນຈິງວ່າ "ນີ້ທຸກ ນີ້ເຫດເກີດແຫ່ງທຸກ ນີ້ຄວາມດັບທຸກ ນີ້ຂໍ້ປະຕິບັດໃຫ້ເຖິງຄວາມດັບທຸກ" ບຸກຄົນເຊັ່ນນີ້ປຽບ ເໝືອນໝາກມ່ວງດິບແຕ່ຜິວສຸກ ບຸກຄົນປະເພດນີ້ຈຶ່ງປຽບເໝືອນໝາກມ່ວງດິບແຕ່ຜິວສຸກ (໑)

ບຸກຄົນປຽບເໝືອນໝາກມ່ວງສຸກແຕ່ຜິວດິບ ເປັນແນວໃດ?

ບຸກຄົນບາງຄົນໃນໂລກນີ້ມີການກ້າວໄປ ການຖອຍກັບ ການແລເບິ່ງ ການຫຼຽວເບິ່ງ ການຄູ້ເຂົ້າ ການຢຽດອອກ ການຄອງສັງຄາຕິ ບາດ ແລະຈີວອນທີ່ບໍ່ໜ້າເຫຼື້ອມໃສ ແຕ່ເຂົາຮູ້ຊັດແຈ້ງຕາມຄວາມເປັນຈິງວ່າ "ນີ້ທຸກ ນີ້ເຫດເກີດແຫ່ງທຸກ ນີ້ຄວາມດັບທຸກ ນີ້ຂໍ້ປະຕິບັດໃຫ້ເຖິງຄວາມດັບທຸກ" ບຸກຄົນເຊັ່ນນີ້ປຽບເໝືອນໝາກມ່ວງສຸກແຕ່ຜິວດິບ ບຸກຄົນປະເພດນີ້ຈຶ່ງປຽບເໝືອນໝາກມ່ວງສຸກແຕ່ຜິວດິບ (໒)

ບຸກຄົນປຽບເໝືອນໝາກມ່ວງດິບແລະຜິວດິບ ເປັນແນວໃດ?

ບຸກຄົນບາງຄົນໃນໂລກນີ້ມີການກ້າວໄປ ການຖອຍກັບ ການແລເບິ່ງ ການຫຼຽວເບິ່ງ ການຄູ້ເຂົ້າ ການຢຽດອອກ ການຄອງສັງຄາຕິ ບາດ ແລະຈີວອນທີ່ບໍ່ໜ້າເຫຼື້ອມໃສ ແລະເຂົາບໍ່ຮູ້ຊັດແຈ້ງຕາມຄວາມເປັນຈິງວ່າ "ນີ້ທຸກ ນີ້ເຫດເກີດແຫ່ງທຸກ ນີ້ຄວາມດັບທຸກ ນີ້ຂໍ້ປະຕິບັດໃຫ້ເຖິງຄວາມດັບທຸກ" ບຸກຄົນເຊັ່ນນີ້ປຽບເໝືອນໝາກມ່ວງດິບແລະຜິວດິບ ບຸກຄົນປະເພດນີ້ຈຶ່ງປຽບເໝືອນໝາກມ່ວງດິບແລະຜິວດິບ (໓)

ບຸກຄົນປຽບເໝືອນໝາກມ່ວງສຸກແລະຜິວສຸກ ເປັນແນວໃດ?

ບຸກຄົນບາງຄົນໃນໂລກນີ້ມີການກ້າວໄປ ການຖອຍກັບ ການແລເບິ່ງ ການຫຼຽວເບິ່ງ ການຄູ້ເຂົ້າ ການຢຽດອອກ ການຄອງສັງຄາຕິ ບາດ ແລະຈີວອນທີ່ໜ້າເຫຼື້ອມໃສ ແລະເຂົາຮູ້ຊັດແຈ້ງຕາມຄວາມເປັນຈິງວ່າ "ນີ້ທຸກ ນີ້ເຫດເກີດແຫ່ງທຸກ ນີ້ຄວາມດັບທຸກ ນີ້ຂໍ້ປະຕິບັດໃຫ້ເຖິງຄວາມດັບທຸກ" ບຸກຄົນເຊັ່ນນີ້ປຽບເໝືອນໝາກມ່ວງສຸກແລະຜິວສຸກ ບຸກຄົນປະເພດນີ້ຈຶ່ງປຽບເໝືອນໝາກມ່ວງສຸກແລະຜິວສຸກ (໔)

ບຸກຄົນປຽບເໝືອນໝາກມ່ວງ ໔ ຈຳພວກເຫຼົ່ານີ້ມີປາກົດຢູ່ໃນໂລກ

[໑໗໐] ໃນບົດມາຕິການັ້ນ ບຸກຄົນປຽບເໝືອນໝໍ້ ໔ ຈຳພວກ ເປັນແນວໃດ?

ໝໍ້ ໔ ຊະນິດ ຄື

໑. ໝໍ້ເປົ່າແຕ່ອັດຝາ ໒. ໝໍ້ເຕັມແຕ່ໄຂຝາ
໓. ໝໍ້ເປົ່າແລະໄຂຝາ ໔. ໝໍ້ເຕັມແລະອັດຝາ

ບຸກຄົນປຽບເໝືອນໝໍ້ ໔ ຈຳພວກເຫຼົ່ານີ້ມີຜາກົດຢູ່ໃນໂລກແນວນີ້ຄືກັນ

ບຸກຄົນ ໔ ຈຳພວກ ເປັນແນວໃດ?

໑. ບຸກຄົນປຽບເໝືອນໝໍ້ເປົ່າແຕ່ອັດຝາ
໒. ບຸກຄົນປຽບເໝືອນໝໍ້ເຕັມແຕ່ໄຂຝາ
໓. ບຸກຄົນປຽບເໝືອນໝໍ້ເປົ່າແລະໄຂຝາ
໔. ບຸກຄົນປຽບເໝືອນໝໍ້ເຕັມແລະອັດຝາ

ບຸກຄົນປຽບເໝືອນໝໍ້ເປົ່າແຕ່ອັດຝາ ເປັນແນວໃດ?

ບຸກຄົນບາງຄົນໃນໂລກນີ້ມີການກ້າວໄປ ການຖອຍກັບ ການແລເບິ່ງ ການຫຼຽວເບິ່ງ ການຄູ້ເຂົ້າ ການຢຽດອອກ ການຄອງສັງຄາຕິ ບາດ ແລະຈີວອນທີ່ໜ້າເຫຼື້ອມໃສ ແຕ່ເຂົາບໍ່ຮູ້ຊັດແຈ້ງຕາມຄວາມເປັນຈິງວ່າ “ນີ້ທຸກ ນີ້ເຫດເກີດແຫ່ງທຸກ ນີ້ຄວາມດັບທຸກ ນີ້ຂໍ້ປະຕິບັດໃຫ້ເຖິງຄວາມດັບທຸກ” ບຸກຄົນເຊັ່ນນີ້ປຽບເໝືອນໝໍ້ເປົ່າແຕ່ອັດຝາ ບຸກຄົນປະເພດນີ້ຈຶ່ງປຽບເໝືອນໝໍ້ເປົ່າແຕ່ອັດຝາ

ບຸກຄົນປຽບເໝືອນໝໍ້ເຕັມແຕ່ໄຂຝາ ເປັນແນວໃດ?

ບຸກຄົນບາງຄົນໃນໂລກນີ້ມີການກ້າວໄປ ການຖອຍກັບ ການແລເບິ່ງ ການຫຼຽວເບິ່ງ ການຄູ້ເຂົ້າ ການຢຽດອອກ ການຄອງສັງຄາຕິ ບາດ ແລະຈີວອນທີ່ບໍ່ໜ້າເຫຼື້ອມໃສ ແຕ່ເຂົາຮູ້ຊັດຕາມຄວາມເປັນຈິງວ່າ “ນີ້ທຸກ ຯລຯ ນີ້ຂໍ້ປະຕິບັດໃຫ້ເຖິງຄວາມດັບທຸກ” ບຸກຄົນເຊັ່ນນີ້ປຽບເໝືອນໝໍ້ເຕັມແຕ່ໄຂຝາ ບຸກຄົນປະເພດນີ້ຈຶ່ງປຽບເໝືອນໝໍ້ເຕັມແຕ່ໄຂຝາ

ບຸກຄົນປຽບເໝືອນໝໍ້ເປົ່າແລະໄຂຝາ ເປັນແນວໃດ?

ບຸກຄົນບາງຄົນໃນໂລກນີ້ມີການກ້າວໄປ ການຖອຍກັບ ການແລເບິ່ງ ການຫຼຽວເບິ່ງ ການຄູ້ເຂົ້າ ການຢຽດອອກ ການຄອງສັງຄາຕິ ບາດ ແລະຈີວອນທີ່ບໍ່ໜ້າເຫຼື້ອມໃສ ແລະເຂົາບໍ່ຮູ້ຊັດແຈ້ງຕາມຄວາມເປັນຈິງວ່າ “ນີ້ທຸກ ຯລຯ ນີ້ຂໍ້ປະຕິບັດໃຫ້ເຖິງຄວາມດັບທຸກ” ບຸກຄົນເຊັ່ນນີ້ປຽບເໝືອນໝໍ້ເປົ່າແລະໄຂຝາ ບຸກຄົນປະເພດນີ້ຈຶ່ງປຽບເໝືອນໝໍ້ເປົ່າແລະໄຂຝາ

ບຸກຄົນປຽບເໝືອນໝໍ້ເຕັມແລະອັດຝາ ເປັນແນວໃດ?

ບຸກຄົນບາງຄົນໃນໂລກນີ້ມີການກ້າວໄປ ການຖອຍກັບ ການແລເບິ່ງ ການຫຼຽວເບິ່ງ ການຄູ້ເຂົ້າ ການຢຽດອອກ ການຄອງສັງຄາຕິ ບາດ ແລະຈີວອນທີ່ໜ້າເຫຼື້ອມໃສ ແລະເຂົາຮູ້ຊັດແຈ້ງຕາມຄວາມເປັນຈິງວ່າ "ນີ້ທຸກ ฯລฯ ນີ້ຂໍ້ປະຕິບັດໃຫ້ເຖິງຄວາມດັບທຸກ" ບຸກຄົນເຊັ່ນນີ້ປຽບເໝືອນໝໍ້ເຕັມແລະອັດຝາ ບຸກຄົນປະເພດນີ້ຈຶ່ງປຽບເໝືອນໝໍ້ເຕັມແລະອັດຝາ

ບຸກຄົນປຽບເໝືອນໝໍ້ ໔ ຈຳພວກເຫຼົ່ານີ້ມີຜາກົດຢູ່ໃນໂລກ

[໑໖໑] ໃນບົດມາຕິການັ້ນ ບຸກຄົນປຽບເໝືອນຫ້ວງນໍ້າ ໔ ຈຳພວກ ເປັນແນວໃດ?

ຫ້ວງນໍ້າ ໔ ຊະນິດ ຄື

໑. ຫ້ວງນໍ້າຕື້ນແຕ່ເງົາເລິກ ໒. ຫ້ວງນໍ້າເລິກແຕ່ເງົາຕື້ນ
໓. ຫ້ວງນໍ້າຕື້ນແລະເງົາຕື້ນ ໔. ຫ້ວງນໍ້າເລິກແລະເງົາເລິກ

ບຸກຄົນປຽບເໝືອນຫ້ວງນໍ້າ ໔ ຈຳພວກເຫຼົ່ານີ້ມີຜາກົດຢູ່ໃນໂລກແນວນີ້ຄືກັນ
ບຸກຄົນ ໔ ຈຳພວກ ເປັນແນວໃດ?

໑. ບຸກຄົນປຽບເໝືອນຫ້ວງນໍ້າຕື້ນແຕ່ເງົາເລິກ
໒. ບຸກຄົນປຽບເໝືອນຫ້ວງນໍ້າເລິກແຕ່ເງົາຕື້ນ
໓. ບຸກຄົນປຽບເໝືອນຫ້ວງນໍ້າຕື້ນແລະເງົາຕື້ນ
໔. ບຸກຄົນປຽບເໝືອນຫ້ວງນໍ້າເລິກແລະເງົາເລິກ

ບຸກຄົນປຽບເໝືອນຫ້ວງນໍ້າຕື້ນແຕ່ເງົາເລິກ ເປັນແນວໃດ?

ບຸກຄົນບາງຄົນໃນໂລກນີ້ມີການກ້າວໄປ ການຖອຍກັບ ການແລເບິ່ງ ການຫຼຽວເບິ່ງ ການຄູ້ເຂົ້າ ການຢຽດອອກ ການຄອງສັງຄາຕິ ບາດ ແລະຈີວອນທີ່ໜ້າເຫຼື້ອມໃສ ແຕ່ເຂົາບໍ່ຮູ້ຊັດແຈ້ງຕາມຄວາມເປັນຈິງວ່າ "ນີ້ທຸກ ฯລฯ ນີ້ຂໍ້ປະຕິບັດໃຫ້ເຖິງຄວາມດັບທຸກ" ບຸກຄົນເຊັ່ນນີ້ປຽບເໝືອນຫ້ວງນໍ້າຕື້ນແຕ່ເງົາເລິກ ບຸກຄົນປະເພດນີ້ຈຶ່ງປຽບເໝືອນຫ້ວງນໍ້າຕື້ນ ແຕ່ເງົາເລິກ

ບຸກຄົນປຽບເໝືອນຫ້ວງນໍ້າເລິກແຕ່ເງົາຕື້ນ ເປັນແນວໃດ?

ບຸກຄົນບາງຄົນໃນໂລກນີ້ມີການກ້າວໄປ ການຖອຍກັບ ການແລເບິ່ງ ການຫຼຽວເບິ່ງ ການຄູ້ເຂົ້າ ການຢຽດອອກ ການຄອງສັງຄາຕິ ບາດ ແລະຈີວອນທີ່ບໍ່ໜ້າເຫຼື້ອມໃສ ແຕ່ເຂົາຮູ້ຊັດແຈ້ງຕາມຄວາມເປັນຈິງວ່າ "ນີ້ທຸກ ฯລฯ ນີ້ຂໍ້ປະຕິບັດໃຫ້ເຖິງຄວາມດັບທຸກ" ບຸກຄົນເຊັ່ນນີ້ປຽບເໝືອນຫ້ວງນໍ້າເລິກແຕ່ເງົາຕື້ນ ບຸກຄົນປະເພດນີ້ຈຶ່ງປຽບເໝືອນຫ້ວງນໍ້າເລິກ ແຕ່ເງົາຕື້ນ

ບຸກຄົນປຽບເໝືອນຫ້ວງນ້ຳຕື້ນແລະເງົາຕື້ນ ເປັນແນວໃດ?

ບຸກຄົນບາງຄົນໃນໂລກນີ້ມີການກ້າວໄປ ການຖອຍກັບ ການແລເບິ່ງ ການຫຼຽວເບິ່ງ ການຄູ້ເຂົ້າ ການຢຽດອອກ ການຄອງສັງຄາຕິ ບາດ ແລະຈີວອນທີ່ບໍ່ໜ້າເຫຼື້ອມໃສ ແລະເຂົາບໍ່ຮູ້ຊັດແຈ້ງຕາມຄວາມເປັນຈິງວ່າ "ນີ້ທຸກ ໆລໆ ນີ້ຂໍ້ປະຕິບັດໃຫ້ເຖິງຄວາມດັບທຸກ" ບຸກຄົນເຊັ່ນນີ້ປຽບເໝືອນຫ້ວງນ້ຳຕື້ນແລະເງົາຕື້ນ ບຸກຄົນປະເພດນີ້ຈຶ່ງປຽບເໝືອນຫ້ວງນ້ຳຕື້ນແລະເງົາຕື້ນ

ບຸກຄົນປຽບເໝືອນຫ້ວງນ້ຳເລິກແລະເງົາເລິກ ເປັນແນວໃດ?

ບຸກຄົນບາງຄົນໃນໂລກນີ້ມີການກ້າວໄປ ການຖອຍກັບ ການແລເບິ່ງ ການຫຼຽວເບິ່ງ ການຄູ້ເຂົ້າ ການຢຽດອອກ ການຄອງສັງຄາຕິ ບາດ ແລະຈີວອນທີ່ໜ້າເຫຼື້ອມໃສ ແລະເຂົາຮູ້ຊັດແຈ້ງຕາມຄວາມເປັນຈິງວ່າ "ນີ້ທຸກ ໆລໆ ນີ້ຂໍ້ປະຕິບັດໃຫ້ເຖິງຄວາມດັບທຸກ" ບຸກຄົນເຊັ່ນນີ້ປຽບເໝືອນຫ້ວງນ້ຳເລິກແລະເງົາເລິກ ບຸກຄົນປະເພດນີ້ຈຶ່ງປຽບເໝືອນຫ້ວງນ້ຳເລິກແລະເງົາເລິກ

ບຸກຄົນປຽບເໝືອນຫ້ວງນ້ຳ ໔ ຈຳພວກເຫຼົ່ານີ້ມີປາກົດຢູ່ໃນໂລກ

[໑໖໘] ໃນບັດມາຕິການັ້ນ ບຸກຄົນປຽບເໝືອນງົວເຖິກ ໔ ຈຳພວກ ເປັນແນວໃດ?

ງົວຜູ້ ໔ ຈຳພວກ ຄື

໑. ງົວຜູ້ທີ່ຂົ່ມເຫງງົວຝູງຕົນແຕ່ບໍ່ຂົ່ມເຫງງົວຝູງອື່ນ
໒. ງົວຜູ້ທີ່ຂົ່ມເຫງງົວຝູງອື່ນແຕ່ບໍ່ຂົ່ມເຫງງົວຝູງຕົນ
໓. ງົວຜູ້ທີ່ຂົ່ມເຫງງົວຝູງຕົນແລະຂົ່ມເຫງງົວຝູງອື່ນ
໔. ງົວຜູ້ທີ່ບໍ່ຂົ່ມເຫງງົວຝູງຕົນແລະບໍ່ຂົ່ມເຫງງົວຝູງອື່ນ

ບຸກຄົນປຽບເໝືອນງົວເຖິກ ໔ ຈຳພວກເຫຼົ່ານີ້ມີປາກົດຢູ່ໃນໂລກແນວນີ້ຄືກັນ

ບຸກຄົນ ໔ ຈຳພວກ ເປັນແນວໃດ?

໑. ບຸກຄົນປຽບເໝືອນງົວເຖິກທີ່ຂົ່ມເຫງງົວຝູງຕົນແຕ່ບໍ່ຂົ່ມເຫງງົວຝູງອື່ນ
໒. ບຸກຄົນປຽບເໝືອນງົວເຖິກທີ່ຂົ່ມເຫງງົວຝູງອື່ນແຕ່ບໍ່ຂົ່ມເຫງງົວຝູງຕົນ
໓. ບຸກຄົນປຽບເໝືອນງົວເຖິກທີ່ຂົ່ມເຫງງົວຝູງຕົນແລະຂົ່ມເຫງງົວຝູງອື່ນ
໔. ບຸກຄົນປຽບເໝືອນງົວເຖິກທີ່ບໍ່ຂົ່ມເຫງງົວຝູງຕົນແລະບໍ່ຂົ່ມເຫງງົວຝູງອື່ນ

ບຸກຄົນປຽບເໝືອນງົວເຖິກທີ່ຂົ່ມເຫງງົວຝູງຕົນແຕ່ບໍ່ຂົ່ມເຫງງົວຝູງອື່ນ ເປັນແນວໃດ?

ບຸກຄົນບາງຄົນໃນໂລກນີ້ເຮັດໃຫ້ບໍລິສັດຂອງຕົນຢ້ານກົວແຕ່ບໍ່ເຮັດໃຫ້ບໍລິສັດຂອງຄົນອື່ນຢ້ານກົວ ບຸກຄົນເຊັ່ນນີ້ປຽບເໝືອນງົວເຖິກທີ່ຂົ່ມເຫງງົວຝູງຕົນແຕ່ບໍ່ຂົ່ມເຫງງົວຝູງອື່ນ ບຸກຄົນປະເພດນີ້ຈຶ່ງປຽບເໝືອນງົວເຖິກທີ່ຂົ່ມເຫງງົວຝູງຕົນແຕ່ບໍ່ຂົ່ມເຫງງົວຝູງອື່ນ

ບຸກຄົນປຽບເໝືອນງົວເຖິກທີ່ຂົ່ມເຫງງົວຝູງອື່ນແຕ່ບໍ່ຂົ່ມເຫງງົວຝູງຕົນ ເປັນແນວໃດ?

ບຸກຄົນບາງຄົນໃນໂລກນີ້ເຮັດໃຫ້ບໍລິສັດຂອງຄົນອື່ນຢ້ານກົວແຕ່ບໍ່ເຮັດໃຫ້ບໍລິສັດຂອງຕົນຢ້ານກົວ ບຸກຄົນເຊັ່ນນີ້ປຽບເໝືອນງົວເຖິກທີ່ຂົ່ມເຫງງົວຝູງອື່ນແຕ່ບໍ່ຂົ່ມເຫງງົວຝູງຕົນ ບຸກຄົນປະເພດນີ້ຈຶ່ງປຽບເໝືອນງົວເຖິກທີ່ຂົ່ມເຫງງົວຝູງອື່ນແຕ່ບໍ່ຂົ່ມເຫງງົວຝູງຕົນ

ບຸກຄົນປຽບເໝືອນງົວເຖິກທີ່ຂົ່ມເຫງງົວຝູງຕົນແລະຂົ່ມເຫງງົວຝູງອື່ນ ເປັນແນວໃດ?

ບຸກຄົນບາງຄົນໃນໂລກນີ້ເຮັດໃຫ້ບໍລິສັດຂອງຕົນແລະບໍລິສັດຂອງຄົນອື່ນຢ້ານກົວ ບຸກຄົນເຊັ່ນນີ້ປຽບເໝືອນງົວເຖິກທີ່ຂົ່ມເຫງງົວຝູງຕົນແລະຂົ່ມເຫງງົວຝູງອື່ນ ບຸກຄົນປະເພດນີ້ຈຶ່ງປຽບເໝືອນງົວເຖິກທີ່ຂົ່ມເຫງງົວຝູງຕົນແລະຂົ່ມເຫງງົວຝູງອື່ນ

ບຸກຄົນປຽບເໝືອນງົວເຖິກທີ່ບໍ່ຂົ່ມເຫງງົວຝູງຕົນແລະບໍ່ຂົ່ມເຫງງົວຝູງອື່ນ ເປັນແນວໃດ?

ບຸກຄົນບາງຄົນໃນໂລກນີ້ບໍ່ເຮັດໃຫ້ບໍລິສັດຂອງຕົນແລະບໍລິສັດຂອງຄົນອື່ນຢ້ານກົວ ບຸກຄົນເຊັ່ນນີ້ປຽບເໝືອນງົວເຖິກທີ່ບໍ່ຂົ່ມເຫງງົວຝູງຕົນແລະບໍ່ຂົ່ມເຫງງົວຝູງອື່ນ ບຸກຄົນປະເພດນີ້ຈຶ່ງປຽບເໝືອນງົວເຖິກທີ່ບໍ່ຂົ່ມເຫງງົວຝູງຕົນແລະບໍ່ຂົ່ມເຫງງົວຝູງອື່ນ

ບຸກຄົນປຽບເໝືອນງົວເຖິກ ໔ ຈຳພວກເຫຼົ່ານີ້ມີປາກົດຢູ່ໃນໂລກ

[໑໕໓] ໃນບົດມາຕິການັ້ນ ບຸກຄົນປຽບເໝືອນອະສໍຣະພິດ ໔ ຈຳພວກ ເປັນແນວໃດ?

ອະສໍຣະພິດ ໔ ຈຳພວກ ຄື

໑. ອະສໍຣະພິດທີ່ມີພິດແລ່ນໄວແຕ່ພິດບໍ່ຮ້າຍແຮງ
໒. ອະສໍຣະພິດທີ່ມີພິດຮ້າຍແຮງແຕ່ພິດບໍ່ແລ່ນໄວ
໓. ອະສໍຣະພິດທີ່ມີພິດແລ່ນໄວແລະພິດຮ້າຍແຮງ
໔. ອະສໍຣະພິດທີ່ມີພິດບໍ່ແລ່ນໄວແລະພິດບໍ່ຮ້າຍແຮງ

ບຸກຄົນປຽບເໝືອນອະສໍຣະພິດ ໔ ຈຳພວກເຫຼົ່ານີ້ມີປາກົດຢູ່ໃນໂລກແນວນີ້ ຄືກັນ ບຸກຄົນ ໔ ຈຳພວກ ເປັນແນວໃດ?

໑. ບຸກຄົນປຽບເໝືອນອະສໍຣະພິດທີ່ມີພິດແລ່ນໄວແຕ່ພິດບໍ່ຮ້າຍແຮງ
໒. ບຸກຄົນປຽບເໝືອນອະສໍຣະພິດທີ່ມີພິດຮ້າຍແຮງແຕ່ພິດບໍ່ແລ່ນໄວ
໓. ບຸກຄົນປຽບເໝືອນອະສໍຣະພິດທີ່ມີພິດແລ່ນໄວແລະພິດຮ້າຍແຮງ
໔. ບຸກຄົນປຽບເໝືອນອະສໍຣະພິດທີ່ມີພິດບໍ່ແລ່ນໄວແລະພິດບໍ່ຮ້າຍແຮງ

ບຸກຄົນປຽບເໝືອນອະສໍຣະພິດທີ່ມີພິດແລ່ນໄວແຕ່ພິດບໍ່ຮ້າຍແຮງ ເປັນແນວໃດ?

ບຸກຄົນບາງຄົນໃນໂລກນີ້ໂກດ ແຕ່ຄວາມໂກດຂອງເຂົາບໍ່ຄົງຢູ່ໄດ້ດົນນານ ບຸກຄົນເຊັ່ນ

ນີ້ປຽບເໝືອນອະສໍຣະພິດທີ່ມີພິດແລ່ນໄວແຕ່ພິດບໍ່ຮ້າຍແຮງ ບຸກຄົນປະເພດນີ້ຈຶ່ງປຽບເໝືອນອະສໍຣະພິດທີ່ມີພິດແລ່ນໄວແຕ່ພິດບໍ່ຮ້າຍແຮງ (໑)

ບຸກຄົນປຽບເໝືອນອະສໍຣະພິດທີ່ມີພິດຮ້າຍແຮງແຕ່ພິດບໍ່ແລ່ນໄວ ເປັນແນວໃດ?

ບຸກຄົນບາງຄົນໃນໂລກນີ້ບໍ່ໂກດແຕ່ຄວາມໂກດຂອງເຂົາຄົງຢູ່ດົນນານ ບຸກຄົນເຊັ່ນນີ້ປຽບເໝືອນອະສໍຣະພິດທີ່ມີພິດຮ້າຍແຮງແຕ່ພິດບໍ່ແລ່ນໄວ ບຸກຄົນປະເພດນີ້ຈຶ່ງປຽບເໝືອນອະສໍຣະພິດທີ່ມີພິດຮ້າຍແຮງແຕ່ພິດບໍ່ແລ່ນໄວ (໒)

ບຸກຄົນປຽບເໝືອນອະສໍຣະພິດທີ່ມີພິດແລ່ນໄວແລະພິດຮ້າຍແຮງ ເປັນແນວໃດ?

ບຸກຄົນບາງຄົນໃນໂລກນີ້ໂກດ ແລະຄວາມໂກດຂອງເຂົາຄົງຢູ່ໄດ້ດົນນານ ບຸກຄົນເຊັ່ນນີ້ປຽບເໝືອນອະສໍຣະພິດທີ່ມີພິດແລ່ນໄວແລະພິດຮ້າຍແຮງ ບຸກຄົນປະເພດນີ້ຈຶ່ງປຽບເໝືອນອະສໍຣະພິດທີ່ມີພິດແລ່ນໄວແລະພິດຮ້າຍແຮງ (໓)

ບຸກຄົນປຽບເໝືອນອະສໍຣະພິດທີ່ມີພິດບໍ່ແລ່ນໄວແລະພິດບໍ່ຮ້າຍແຮງ ເປັນແນວໃດ?

ບຸກຄົນບາງຄົນໃນໂລກນີ້ບໍ່ໂກດ ແລະຄວາມໂກດຂອງເຂົາບໍ່ຄົງຢູ່ໄດ້ດົນນານ ບຸກຄົນເຊັ່ນນີ້ປຽບເໝືອນອະສໍຣະພິດ ທີ່ມີພິດບໍ່ແລ່ນໄວແລະພິດບໍ່ຮ້າຍແຮງ ບຸກຄົນປະເພດນີ້ຈຶ່ງປຽບເໝືອນອະສໍຣະພິດທີ່ມີພິດບໍ່ແລ່ນໄວ ແລະພິດບໍ່ຮ້າຍແຮງ (໔)

ບຸກຄົນປຽບເໝືອນອະສໍຣະພິດ ໔ ຈຳພວກເຫຼົ່ານີ້ມີປາກົດຢູ່ໃນໂລກ

[໑໖໔] ບຸກຄົນບໍ່ພິຈາລະນາ ບໍ່ໄຕ່ຕອງແລ້ວກ່າວສັນເສີນຜູ້ຄວນຕິຕຽນເປັນແນວໃດ?

ບຸກຄົນບາງຄົນໃນໂລກນີ້ກ່າວສັນເສີນພວກເດຍຣະຖີ ສາວົກເດຍຣະຖີຜູ້ປະຕິບັດຊົ່ວປະຕິບັດຜິດວ່າ "ປະຕິບັດດີແດ່ ປະຕິບັດຊອບແດ່" ບຸກຄົນເຊັ່ນນີ້ຊື່ວ່າ ບໍ່ພິຈາລະນາ ບໍ່ໄຕຕອງແລ້ວກ່າວສັດເສີນຜູ້ຄວນຕິຕຽນ (໑)

ບຸກຄົນບໍ່ພິຈາລະນາ ບໍ່ໄຕ່ຕອງແລ້ວກ່າວຕິຕຽນຜູ້ຄວນສັນເສີນ ເປັນແນວໃດ?

ບຸກຄົນບາງຄົນໃນໂລກນີ້ກ່າວຕິຕຽນພຣະພຸດທະເຈົ້າ ສາວົກຂອງພຣະພຸດທະເຈົ້າຜູ້ປະຕິບັດດີ ປະຕິບັດຊອບວ່າ "ປະຕິບັດຊົ່ວແດ່ ປະຕິບັດຜິດແດ່" ບຸກຄົນເຊັ່ນນີ້ຊື່ວ່າ ບໍ່ພິຈາລະນາ ບໍ່ໄຕ່ຕອງແລ້ວກ່າວຕິຕຽນຜູ້ຄວນສັນເສີນ (໒)

ບຸກຄົນບໍ່ພິຈາລະນາ ບໍ່ໄຕ່ຕອງແລ້ວສະແດງຄວາມເຫຼື້ອມໃສໃນຖານະທີ່ບໍ່ຄວນເຫຼື້ອມໃສ ເປັນແນວໃດ?

ບຸກຄົນບາງຄົນໃນໂລກນີ້ສະແດງຄວາມເຫຼື້ອມໃສໃນຂໍ້ປະຕິປະທາຊົ່ວ ໃນຂໍ້ປະຕິປະທາຜິດວ່າ "ຂໍ້ປະຕິປະທາດີ ຂໍ້ປະຕິປະທາຊອບ" ບຸກຄົນເຊັ່ນນີ້ຊື່ວ່າບໍ່ພິຈາລະນາ ບໍ່ໄຕ່ຕອງແລ້ວສະແດງຄວາມເຫຼື້ອມໃສໃນຖານະທີ່ບໍ່ຄວນເຫຼື້ອມໃສ (໓)

ບຸກຄົນບໍ່ພິຈາລະນາ ບໍ່ໄຕ່ຕອງແລ້ວສະແດງຄວາມບໍ່ເຫຼື້ອມໃສໃນຖານະທີ່ຄວນເຫຼື້ອມໃສ ເປັນແນວໃດ?

ບຸກຄົນບາງຄົນໃນໂລກນີ້ສະແດງຄວາມບໍ່ເຫຼື້ອມໃສໃນຂໍ້ປະຕິປະທາດີ ໃນຂໍ້ປະຕິປະທາຊອບວ່າ "ຂໍ້ປະຕິປະທາຊົ່ວແດ່ ຂໍ້ປະຕິປະທາຜິດແດ່" ບຸກຄົນເຊັ່ນນີ້ຊື່ວ່າບໍ່ພິຈາລະນາ ບໍ່ໄຕ່ຕອງ ແລ້ວສະແດງຄວາມບໍ່ເຫຼື້ອມໃສໃນຖານະທີ່ຄວນເຫຼື້ອມໃສ (໔)

[໑໖໕] ບຸກຄົນພິຈາລະນາ ໄຕ່ຕອງແລ້ວກ່າວຕິຕຽນຜູ້ຄວນຕິຕຽນ ເປັນແນວໃດ?

ບຸກຄົນບາງຄົນໃນໂລກນີ້ກ່າວຕິຕຽນພວກເດຍຣະຖີ ສາວົກຂອງເດຍຣະຖີຜູ້ປະຕິບັດຊົ່ວປະຕິບັດຜິດວ່າ "ປະຕິບັດຊົ່ວແດ່ ປະຕິບັດຜິດແດ່" ບຸກຄົນເຊັ່ນນີ້ຊື່ວ່າພິຈາລະນາ ໄຕ່ຕອງແລ້ວກ່າວຕິຕຽນຜູ້ຄວນຕິຕຽນ (໑)

ບຸກຄົນພິຈາລະນາ ໄຕ່ຕອງແລ້ວກ່າວສັນເສີນຜູ້ຄວນສັນເສີນ ເປັນແນວໃດ?

ບຸກຄົນບາງຄົນໃນໂລກນີ້ກ່າວສັນເສີນພຣະພຸດທະເຈົ້າ ສາວົກຂອງພຣະພຸດທະເຈົ້າ ຜູ້ປະຕິບັດດີ ປະຕິບັດຊອບວ່າ "ປະຕິບັດດີແດ່ ປະຕິບັດຊອບແດ່" ບຸກຄົນເຊັ່ນນີ້ຊື່ວ່າພິຈາລະນາ ໄຕ່ຕອງແລ້ວກ່າວສັນເສີນຜູ້ຄວນສັນເສີນ (໒)

ບຸກຄົນພິຈາລະນາ ໄຕ່ຕອງແລ້ວສະແດງຄວາມບໍ່ເຫຼື້ອມໃສໃນຖານະທີ່ບໍ່ຄວນເຫຼື້ອມໃສ ເປັນແນວໃດ?

ບຸກຄົນບາງຄົນໃນໂລກນີ້ສະແດງຄວາມບໍ່ເຫຼື້ອມໃສໃນຂໍ້ປະຕິປະທາຊົ່ວ ຂໍ້ປະຕິປະທາຜິດວ່າ "ຂໍ້ປະຕິປະທາຊົ່ວແດ່ ຂໍ້ປະຕິປະທາຜິດແດ່" ບຸກຄົນເຊັ່ນນີ້ຊື່ວ່າພິຈາລະນາ ໄຕ່ຕອງແລ້ວ ສະແດງຄວາມບໍ່ເຫຼື້ອມໃສໃນຖານະທີ່ບໍ່ຄວນເຫຼື້ອມໃສ (໓)

ບຸກຄົນພິຈາລະນາ ໄຕ່ຕອງແລ້ວສະແດງຄວາມເຫຼື້ອມໃສໃນຖານະທີ່ຄວນເຫຼື້ອມໃສ ເປັນແນວໃດ?

ບຸກຄົນບາງຄົນໃນໂລກນີ້ສະແດງຄວາມເຫຼື້ອມໃສໃນຂໍ້ປະຕິປະທາດີ ຂໍ້ປະຕິປະທາຊອບວ່າ ຂໍ້ປະຕິປະທາດີແດ່ ຂໍ້ປະຕິປະທາຊອບແດ່ ບຸກຄົນເຊັ່ນນີ້ຊື່ວ່າພິຈາລະນາ ໄຕ່ຕອງແລ້ວສະແດງຄວາມເຫຼື້ອມໃສໃນຖານະທີ່ຄວນເຫຼື້ອມໃສ (໔)

[໑໖໖] ບຸກຄົນກ່າວຕິຕຽນຜູ້ຄວນຕິຕຽນຕາມຄວາມເປັນຈິງເໝາະແກ່ການ ແຕ່ບໍ່ກ່າວສັນເສີນຜູ້ຄວນສັນເສີນຕາມຄວາມເປັນຈິງເໝາະແກ່ການ ເປັນແນວໃດ?

ບຸກຄົນບາງຄົນໃນໂລກນີ້ຄວນສັນເສີນກໍມີ ຄວນຕິຕຽນກໍມີ ໃນສອງຄົນນັ້ນ ຜູ້ໃດຄວນຕິຕຽນກໍກ່າວຕິຕຽນຜູ້ນັ້ນຕາມຄວາມເປັນຈິງເໝາະແກ່ການ ຜູ້ໃດຄວນສັນເສີນກໍບໍ່ກ່າວສັນເສີນຜູ້

ນັ້ນຕາມຄວາມເປັນຈິງເໝາະແກ່ການ ບຸກຄົນເຊັ່ນນີ້ຊື່ວ່າ ກ່າວຕິຕຽນຜູ້ຄວນຕິຕຽນຕາມຄວາມເປັນຈິງເໝາະແກ່ການ ແຕ່ບໍ່ກ່າວສັນເສີນຜູ້ຄວນສັນເສີນຕາມຄວາມເປັນຈິງເໝາະແກ່ການ (໑)

ບຸກຄົນກ່າວສັນເສີນຜູ້ຄວນສັນເສີນຕາມຄວາມເປັນຈິງເໝາະແກ່ການ ແຕ່ບໍ່ກ່າວຕິຕຽນຜູ້ຄວນຕິຕຽນຕາມຄວາມເປັນຈິງເໝາະແກ່ການ ເປັນແນວໃດ?

ບຸກຄົນບາງຄົນໃນໂລກນີ້ຄວນສັນເສີນກໍມີ ຄວນຕິຕຽນກໍມີ ໃນສອງຄົນນັ້ນ ຜູ້ໃດຄວນສັນເສີນກໍກ່າວສັນເສີນຜູ້ນັ້ນຕາມຄວາມເປັນຈິງເໝາະແກ່ການ ຜູ້ໃດຄວນຕິຕຽນ ກໍບໍ່ກ່າວຕິຕຽນຜູ້ນັ້ນຕາມຄວາມເປັນຈິງເໝາະແກ່ການ ບຸກຄົນເຊັ່ນນີ້ຊື່ວ່າກ່າວສັນເສີນຜູ້ຄວນສັນເສີນຕາມຄວາມເປັນຈິງເໝາະແກ່ການ ແຕ່ບໍ່ກ່າວຕິຕຽນຜູ້ຄວນຕິຕຽນຕາມຄວາມເປັນຈິງເໝາະແກ່ການ (໒)

ບຸກຄົນກ່າວຕິຕຽນຜູ້ຄວນຕິຕຽນຕາມຄວາມເປັນຈິງເໝາະແກ່ການແລະກ່າວສັນເສີນຜູ້ຄວນສັນເສີນຕາມຄວາມເປັນຈິງເໝາະແກ່ການ ເປັນແນວໃດ?

ບຸກຄົນບາງຄົນໃນໂລກນີ້ຄວນສັນເສີນກໍມີ ຄວນຕິຕຽນກໍມີ ໃນສອງຄົນນັ້ນ ຜູ້ໃດຄວນຕິຕຽນກໍກ່າວຕິຕຽນຜູ້ນັ້ນຕາມຄວາມເປັນຈິງເໝາະແກ່ການ ຜູ້ໃດຄວນສັນເສີນກໍກ່າວສັນເສີນຜູ້ນັ້ນຕາມຄວາມເປັນຈິງເໝາະແກ່ການ ເປັນຜູ້ຮູ້ເວລາເພື່ອຕອບຄຳຖາມນັ້ນ ໃນການກ່າວນັ້ນ ບຸກຄົນເຊັ່ນນີ້ຊື່ວ່າກ່າວຕິຕຽນຜູ້ຄວນຕິຕຽນຕາມຄວາມເປັນຈິງເໝາະແກ່ການແລະກ່າວສັນເສີນຜູ້ຄວນສັນເສີນຕາມຄວາມເປັນຈິງເໝາະແກ່ການ (໓)

ບຸກຄົນບໍ່ກ່າວຕິຕຽນຜູ້ຄວນຕິຕຽນຕາມຄວາມເປັນຈິງເໝາະແກ່ການແລະບໍ່ກ່າວສັນເສີນຜູ້ຄວນສັນເສີນຕາມຄວາມເປັນຈິງເໝາະແກ່ການ ເປັນແນວໃດ?

ບຸກຄົນບາງຄົນໃນໂລກນີ້ຄວນສັນເສີນກໍມີ ຄວນຕິຕຽນກໍມີ ໃນສອງຄົນນັ້ນ ຜູ້ໃດຄວນຕິຕຽນກໍບໍ່ກ່າວຕິຕຽນຜູ້ນັ້ນຕາມຄວາມເປັນຈິງເໝາະແກ່ການ ຜູ້ໃດຄວນສັນເສີນກໍບໍ່ກ່າວສັນເສີນຜູ້ນັ້ນຕາມຄວາມເປັນຈິງເໝາະແກ່ການ ເປັນຜູ້ວາງເສີຍ ມີສະຕິສຳປະຊັນຍະຢູ່ ບຸກຄົນເຊັ່ນນີ້ຊື່ວ່າ ບໍ່ກ່າວຕິຕຽນຜູ້ຄວນຕິຕຽນຕາມຄວາມເປັນຈິງ ເໝາະແກ່ການແລະບໍ່ກ່າວສັນເສີນຜູ້ຄວນສັນເສີນຕາມຄວາມເປັນຈິງເໝາະແກ່ການ (໔)

[໑໙໗] ບຸກຄົນຜູ້ດຳຣົງຊີບດ້ວຍຜົນແຫ່ງຄວາມຂະຫຍັນໝັ່ນພຽນ ແຕ່ບໍ່ດຳຣົງຊີບດ້ວຍຜົນແຫ່ງບຸນ ເປັນແນວໃດ?

ການດຳຣົງຊີບຂອງບຸກຄົນໃດເກີດຂຶ້ນຍ້ອນຄວາມຂະຫຍັນ ຄວາມໝັ່ນ ຄວາມພຽນ ບໍ່ແມ່ນເກີດຂຶ້ນຍ້ອນບຸນ ບຸກຄົນນີ້ຮຽກວ່າ ຜູ້ດຳຣົງຊີບດ້ວຍຜົນແຫ່ງຄວາມຂະຫຍັນໝັ່ນພຽນ ແຕ່

ບໍ່ດຳຣົງຊີບດ້ວຍຜົນແຫ່ງບຸນ ບຸກຄົນຜູ້ດຳຣົງຊີບດ້ວຍຜົນແຫ່ງບຸນ ແຕ່ບໍ່ດຳຣົງຊີບດ້ວຍຜົນແຫ່ງຄວາມຂະຫຍັນໝັ່ນພຽນເປັນແນວໃດ?

ເທວະດາຊັ້ນສູງຂຶ້ນໄປກະທັ່ງເທວະດາຊັ້ນປະຣະນິມມິຕະວະສະວັດດີ ດຳຣົງຊີບດ້ວຍຜົນແຫ່ງບຸນ ແຕ່ບໍ່ດຳຣົງຊີບດ້ວຍຜົນແຫ່ງຄວາມຂະຫຍັນໝັ່ນພຽນບຸກຄົນຜູ້ດຳຣົງຊີບດ້ວຍຜົນແຫ່ງຄວາມຂະຫຍັນໝັ່ນພຽນ ແລະດຳຣົງຊີບດ້ວຍຜົນແຫ່ງບຸນ ເປັນແນວໃດ?

ການດຳຣົງຊີບຂອງບຸກຄົນໃດເກີດຂຶ້ນ ຍ້ອນຄວາມຂະຫຍັນ ຄວາມໝັ່ນ ຄວາມພຽນ ແລະເກີດຂຶ້ນຍ້ອນຜົນບຸນ ບຸກຄົນນີ້ຮຽກວ່າ ຜູ້ດຳຣົງຊີບດ້ວຍຜົນແຫ່ງຄວາມຂະຫຍັນໝັ່ນພຽນ ແລະດຳຣົງຊີບດ້ວຍຜົນແຫ່ງບຸນ

ບຸກຄົນຜູ້ບໍ່ດຳຣົງຊີບດ້ວຍຜົນແຫ່ງຄວາມຂະຫຍັນໝັ່ນພຽນແລະບໍ່ດຳຣົງຊີບດ້ວຍຜົນແຫ່ງບຸນ ເປັນແນວໃດ?

ສັດນະຣົກຊື່ວ່າຜູ້ບໍ່ດຳຣົງຊີບດ້ວຍຜົນແຫ່ງຄວາມຂະຫຍັນໝັ່ນພຽນແລະບໍ່ດຳຣົງຊີບດ້ວຍຜົນແຫ່ງບຸນ

[໑໖໗] ບຸກຄົນຜູ້ມືດມາແລະມືດໄປ ເປັນແນວໃດ?

ບຸກຄົນບາງຄົນໃນໂລກນີ້ເກີດໃນຕະກູນຕ່ຳ ຄື ຕະກູນຈັນທານ ຕະກູນນາຍພານ ຕະກູນຊ່າງສານ ຕະກູນຊ່າງລົດ ຫຼື ຕະກູນຄົນຖອກຂີ້ເຫຍື່ອ ເປັນຕະກູນຍາກຈົນ ມີເຂົ້ານ້ຳ ແລະສິ່ງຂອງເຄື່ອງໃຊ້ໜ້ອຍ ເປັນໄປຢ່າງຝືດເຄືອງ ເປັນແຫຼ່ງທີ່ຫາຂອງກິນແລະເຄື່ອງນຸ່ງຫົ່ມໄດ້ຍາກ ແລະເຂົາມີຜິວພັນໝົ່ນໝອງ ບໍ່ໜ້າເບິ່ງ ຕ່ຳເຕ້ຍ ມີຄວາມເຈັບປ່ວຍຫຼາຍ ຕາບອດ ເປັນງ່ອຍ ເປັນຄົນກະຈອກ ຫຼື ເປັນພະຍາດອຳມະພາດ ມັກບໍ່ໄດ້ເຂົ້າ ນ້ຳ ຜ້າ ຍານ ດອກໄມ້ ຂອງຫອມ ເຄື່ອງລູບໄລ້ ບ່ອນນອນ ບ່ອນພັກແລະເຄື່ອງປະທີບ ເຂົາຍັງປະພຶດກາຍທຸດຈະຣິດ ວະຈີທຸດຈະຣິດ ມະໂນທຸດຈະຣິດ ເມື່ອປະພຶດກາຍທຸດຈະຣິດ ວະຈີທຸດຈະຣິດ ມະໂນທຸດຈະຣິດແລ້ວ ຫຼັງຈາກຕາຍແລ້ວຈະໄປເກີດໃນອະບາຍ ທຸຄະຕິ ວິນິບາດ ນະຣົກ ບຸກຄົນຜູ້ມືດມາແລະມືດໄປ ເປັນແນວນີ້ (໑)

ບຸກຄົນຜູ້ມືດມາແຕ່ສະຫວ່າງໄປ ເປັນແນວໃດ?

ບຸກຄົນບາງຄົນໃນໂລກນີ້ເກີດໃນຕະກູນຕ່ຳ ຄື ຕະກູນຈັນທານ ຕະກູນນາຍພານ ຕະກູນຊ່າງສານ ຕະກູນຊ່າງລົດ ຫຼື ຕະກູນຄົນຖອກຂີ້ເຫຍື່ອ ເປັນຕະກູນຍາກຈົນ ມີເຂົ້າ ນ້ຳ ແລະສິ່ງຂອງເຄື່ອງໃຊ້ໜ້ອຍ ເປັນໄປຢ່າງຝືດເຄືອງ ເປັນແຫຼ່ງທີ່ຫາຂອງກິນແລະເຄື່ອງນຸ່ງຫົ່ມໄດ້ຍາກ ແລະເຂົາມີຜິວພັນໝົ່ນໝອງ ບໍ່ໜ້າເບິ່ງ ຕ່ຳເຕ້ຍ ມີຄວາມເຈັບປ່ວຍຫຼາຍ ຕາບອດ ເປັນງ່ອຍ ເປັນຄົນກະຈອກ ຫຼືເປັນພະຍາດອຳມະພາດ ມັກບໍ່ໄດ້ເຂົ້າ ນ້ຳ ຜ້າ ຍານ ດອກໄມ້ ຂອງຫອມ ເຄື່ອງລູບໄລ້ ບ່ອນນອນ ບ່ອນພັກ ເຄື່ອງປະທີບ ແຕ່ເຂົາປະພຶດກາຍສຸດຈະຣິດ ວະ

ຈີສຸດຈະຣິດ ມະໂນສຸດຈະຣິດ ເມື່ອປະພຶດກາຍສຸດຈະຣິດ ວະຈີສຸດຈະຣິດ ມະໂນສຸດຈະຣິດແລ້ວ ຫຼັງຈາກຕາຍແລ້ວຈະໄປເກີດໃນສຸກຄະຕິໂລກສະຫວັນ ບຸກຄົນຜູ້ມືດມາແຕ່ສະຫວ່າງໄປ ເປັນແນວນີ້ (໔)

ບຸກຄົນຜູ້ສະຫວ່າງມາແຕ່ມືດໄປ ເປັນແນວໃດ?

ບຸກຄົນບາງຄົນໃນໂລກນີ້ເກີດໃນຕະກູນສູງຄືຕະກູນຂັດຕິຍະມະຫາສານ ຕະກູນພາມມະຫາສານ ຫຼື ຕະກູນຄະຫະບໍດີມະຫາສານ ເປັນຕະກູນມັ່ງຄັ່ງ ມີຊັບຫຼາຍ ມີໂພຄະຫຼາຍ ມີຄໍາແລະເງິນຫຼາຍ ມີເຄື່ອງໃຊ້ທີ່ໜ້າພໍໃຈຫຼາຍ ມີຊັບແລະທັນຍະຊາດຫຼາຍ ແລະເຂົາມີຮູບງາມ ໜ້າເບິ່ງ ໜ້າເຫຼື້ອມໃສ ມີສະຫວີວັນຜຸດຜ່ອງສົດໃສ ໄດ້ເຂົ້າ ນໍ້າ ຜ້າ ຍານ ດອກໄມ້ ຂອງຫອມ ເຄື່ອງລູບໄລ້ ບ່ອນນອນ ບ່ອນພັກ ເຄື່ອງປະທີບ ແຕ່ເຂົາປະພຶດກາຍທຸດຈະຣິດ ວະຈີທຸດຈະຣິດ ມະໂນທຸດຈະຣິດ ເມື່ອປະພຶດກາຍທຸດຈະຣິດ ວະຈີທຸດຈະຣິດ ມະໂນທຸດຈະຣິດແລ້ວ ຫຼັງຈາກຕາຍແລ້ວຈະໄປເກີດໃນອະບາຍ ທຸຄະຕິ ວິນິບາດ ນະຣົກ ບຸກຄົນຜູ້ສະຫວ່າງມາແຕ່ມືດໄປ ເປັນແນວນີ້ (໓)

ບຸກຄົນຜູ້ສະຫວ່າງມາແລະສະຫວ່າງໄປ ເປັນແນວໃດ?

ບຸກຄົນບາງຄົນໃນໂລກນີ້ເກີດໃນຕະກູນສູງ ຄື ຕະກູນຂັດຕິຍະມະຫາສານ ຕະກູນພາມມະຫາສານ ຫຼື ຕະກູນຄະຫະບໍດີມະຫາສານ ເປັນຕະກູນມັ່ງຄັ່ງ ມີຊັບຫຼາຍ ມີໂພຄະຫຼາຍ ມີຄໍາແລະເງິນຫຼາຍ ມີເຄື່ອງໃຊ້ທີ່ໜ້າພໍໃຈຫຼາຍ ມີຊັບແລະທັນຍະຊາດຫຼາຍ ແລະເຂົາມີຮູບງາມ ໜ້າເບິ່ງ ໜ້າເຫຼື້ອມໃສ ມີສະຫວີວັນຜຸດຜ່ອງຍິ່ງນັກ ໄດ້ເຂົ້າ ນໍ້າ ຜ້າ ຍານ ດອກໄມ້ ຂອງຫອມ ເຄື່ອງລູບໄລ້ ບ່ອນນອນ ບ່ອນພັກ ເຄື່ອງປະທີບ ແລະເຂົາປະພຶດກາຍສຸດຈະຣິດ ວະຈີສຸດຈະຣິດ ມະໂນສຸດຈະຣິດ ເມື່ອປະພຶດກາຍສຸດຈະຣິດ ວະຈີສຸດຈະຣິດ ມະໂນສຸດຈະຣິດແລ້ວ ຫຼັງຈາກຕາຍແລ້ວ ຈະໄປເກີດໃນສຸກຄະຕິໂລກສະຫວັນ ບຸກຄົນຜູ້ສະຫວ່າງມາແລະສະຫວ່າງໄປ ເປັນແນວນີ້ (໔)

[໑໕໙] ບຸກຄົນຜູ້ຕໍ່າມາແລະຕໍ່າໄປ ເປັນແນວໃດ?

ฯลฯ

ບຸກຄົນຜູ້ຕໍ່າມາແລະຕໍ່າໄປ ເປັນແນວນີ້

ບຸກຄົນຜູ້ຕໍ່າມາແຕ່ສູງໄປ ເປັນແນວໃດ?

ฯลฯ

ບຸກຄົນຜູ້ຕໍ່າມາແຕ່ສູງໄປ ເປັນແນວນີ້

ບຸກຄົນຜູ້ສູງມາແຕ່ຕໍ່າໄປ ເປັນແນວໃດ?

ฯลฯ

ບຸກຄົນຜູ້ສູງມາແຕ່ຕໍ່າໄປ ເປັນແນວນີ້

ບຸກຄົນຜູ້ສູງມາແລະສູງໄປ ເປັນແນວໃດ?
ຯລຯ
ບຸກຄົນຜູ້ສູງມາແລະສູງໄປ ເປັນແນວນີ້

[໑໗໐] ໃນບົດມາຕິການັ້ນ ບຸກຄົນປຽບເໝືອນຕົ້ນໄມ້ ໔ ຈຳພວກ ເປັນແນວໃດ?

ຕົ້ນໄມ້ ໔ ຊະນິດ ຄື

໑. ຕົ້ນໄມ້ເນື້ອອ່ອນແຕ່ມີຕົ້ນໄມ້ເນື້ອແຂງແວດລ້ອມ
໒. ຕົ້ນໄມ້ເນື້ອແຂງແຕ່ມີຕົ້ນໄມ້ເນື້ອອ່ອນແວດລ້ອມ
໓. ຕົ້ນໄມ້ເນື້ອອ່ອນແລະມີຕົ້ນໄມ້ເນື້ອອ່ອນແວດລ້ອມ
໔. ຕົ້ນໄມ້ເນື້ອແຂງ ແລະມີຕົ້ນໄມ້ເນື້ອແຂງແວດລ້ອມ

ບຸກຄົນປຽບເໝືອນຕົ້ນໄມ້ ໔ ຈຳພວກເຫຼົ່ານີ້ມີປາກົດຢູ່ໃນໂລກແນວນີ້ຄືກັນ
ບຸກຄົນ ໔ ຈຳພວກ ເປັນແນວໃດ?

໑. ບຸກຄົນປຽບເໝືອນຕົ້ນໄມ້ເນື້ອອ່ອນແຕ່ມີຕົ້ນໄມ້ເນື້ອແຂງແວດລ້ອມ
໒. ບຸກຄົນປຽບເໝືອນຕົ້ນໄມ້ເນື້ອແຂງແຕ່ມີຕົ້ນໄມ້ເນື້ອອ່ອນແວດລ້ອມ
໓. ບຸກຄົນປຽບເໝືອນຕົ້ນໄມ້ເນື້ອອ່ອນແລະມີຕົ້ນໄມ້ເນື້ອອ່ອນແວດລ້ອມ
໔. ບຸກຄົນປຽບເໝືອນຕົ້ນໄມ້ເນື້ອແຂງແລະມີຕົ້ນໄມ້ເນື້ອແຂງແວດລ້ອມ

ບຸກຄົນປຽບເໝືອນຕົ້ນໄມ້ເນື້ອອ່ອນແຕ່ມີຕົ້ນໄມ້ເນື້ອແຂງແວດລ້ອມ ເປັນແນວໃດ?
ບຸກຄົນບາງຄົນໃນໂລກນີ້ເປັນຜູ້ທຸສິນ ມີທຳອັນຊົ່ວຊາມ ແຕ່ບໍລິສັດຂອງເຂົາເປັນຜູ້ມີສິນ ມີທຳອັນງາມ ບຸກຄົນເຊັ່ນນີ້ປຽບເໝືອນຕົ້ນໄມ້ເນື້ອອ່ອນແຕ່ມີຕົ້ນໄມ້ເນື້ອແຂງແວດລ້ອມ ບຸກຄົນປະເພດນີ້ຈຶ່ງປຽບເໝືອນຕົ້ນໄມ້ເນື້ອອ່ອນແຕ່ມີຕົ້ນໄມ້ເນື້ອແຂງແວດລ້ອມ

ບຸກຄົນປຽບເໝືອນຕົ້ນໄມ້ເນື້ອແຂງແຕ່ມີຕົ້ນໄມ້ເນື້ອອ່ອນແວດລ້ອມ ເປັນແນວໃດ?
ບຸກຄົນບາງຄົນໃນໂລກນີ້ເປັນຜູ້ມີສິນ ມີທຳອັນງາມ ແຕ່ບໍລິສັດຂອງເຂົາເປັນຜູ້ທຸສິນ ມີທຳອັນຊົ່ວຊາມ ບຸກຄົນເຊັ່ນນີ້ປຽບເໝືອນຕົ້ນໄມ້ເນື້ອແຂງແຕ່ມີຕົ້ນໄມ້ເນື້ອອ່ອນແວດລ້ອມ ບຸກຄົນປະເພດນີ້ຈຶ່ງປຽບເໝືອນຕົ້ນໄມ້ເນື້ອແຂງແຕ່ມີຕົ້ນໄມ້ເນື້ອອ່ອນແວດລ້ອມ

ບຸກຄົນປຽບເໝືອນຕົ້ນໄມ້ເນື້ອອ່ອນແລະມີຕົ້ນໄມ້ເນື້ອອ່ອນແວດລ້ອມ ເປັນແນວໃດ?
ບຸກຄົນບາງຄົນໃນໂລກນີ້ເປັນຜູ້ທຸສິນ ມີທຳອັນຊົ່ວຊາມ ແມ່ນບໍລິສັດຂອງເຂົາກໍເປັນຜູ້ທຸສິນ ມີທຳອັນຊົ່ວຊາມ ບຸກຄົນເຊັ່ນນີ້ປຽບເໝືອນຕົ້ນໄມ້ເນື້ອອ່ອນແລະມີຕົ້ນໄມ້ເນື້ອອ່ອນແວດລ້ອມ ບຸກຄົນປະເພດນີ້ຈຶ່ງປຽບເໝືອນຕົ້ນໄມ້ເນື້ອອ່ອນແລະມີຕົ້ນໄມ້ເນື້ອອ່ອນແວດລ້ອມ

ບຸກຄົນປຽບເໝືອນຕົ້ນໄມ້ເນື້ອແຂງແລະມີຕົ້ນໄມ້ເນື້ອແຂງແວດລ້ອມ ເປັນແນວໃດ?

ບຸກຄົນບາງຄົນໃນໂລກນີ້ເປັນຜູ້ມີສິນ ມີທຳອັນງາມ ແມ່ນບໍລິສັດຂອງເຂົາເປັນຜູ້ມີສິນ ມີທຳອັນງາມ ບຸກຄົນເຊັ່ນນີ້ປຽບເໝືອນຕົ້ນໄມ້ເນື້ອແຂງແລະມີຕົ້ນໄມ້ເນື້ອແຂງແວດລ້ອມ ບຸກຄົນປະເພດນີ້ຈຶ່ງປຽບເໝືອນຕົ້ນໄມ້ເນື້ອແຂງແລະມີຕົ້ນໄມ້ເນື້ອແຂງແວດລ້ອມ

ບຸກຄົນປຽບເໝືອນຕົ້ນໄມ້ ໔ ຈຳພວກເຫຼົ່ານີ້ມີຜາກົດຢູ່ໃນໂລກ

[໑໗໑] ບຸກຄົນຜູ້ຖືຮູບເປັນປະມານເຫຼື້ອມໃສໃນຮູບ ເປັນແນວໃດ?

ບຸກຄົນບາງຄົນໃນໂລກນີ້ເຫັນຮູບທີ່ສູງ ຮູບທີ່ຈ່ອຍ ຮູບທີ່ຕຸ້ຍ ຮູບທີ່ມີອະໄວຍະວະສົມສ່ວນ ຖືເອົາປະມານໃນຮູບນັ້ນແລ້ວ ເກີດຄວາມເຫຼື້ອມໃສ ບຸກຄົນນີ້ຮຽກວ່າ ຜູ້ຖືຮູບເປັນປະມານເຫຼື້ອມໃສໃນຮູບ

ບຸກຄົນຜູ້ຖືສຽງເປັນປະມານເຫຼື້ອມໃສໃນສຽງ ເປັນແນວໃດ?

ບຸກຄົນບາງຄົນໃນໂລກນີ້ຖືເອົາປະມານໃນສຽງນັ້ນທີ່ຜູ້ອື່ນກ່າວສັນເສີນ ທີ່ຜູ້ອື່ນຊົມເຊີຍ ທີ່ຜູ້ອື່ນກ່າວຍ້ອງຍໍ ທີ່ຜູ້ອື່ນກ່າວສັນເສີນສືບ ໆ ກັນມາແລ້ວ ເກີດຄວາມເຫຼື້ອມໃສ ບຸກຄົນນີ້ຮຽກວ່າ ຜູ້ຖືສຽງເປັນປະມານເຫຼື້ອມໃສໃນສຽງ

[໑໗໔] ບຸກຄົນຜູ້ຖືຄວາມເສົ້າໝອງ ເປັນປະມານເຫຼື້ອມໃສໃນຄວາມເສົ້າໝອງ ເປັນແນວໃດ?

ບຸກຄົນບາງຄົນໃນໂລກນີ້ເຫັນຈີວອນເສົ້າໝອງ ບາດເສົ້າໝອງ ເສນາສະນະເສົ້າໝອງ ຫຼື ເຫັນທຸກກະຣະກິຣິຍາຕ່າງ ໆ ຖືເອົາປະມານໃນຄວາມເສົ້າໝອງນັ້ນແລ້ວ ເກີດຄວາມເຫຼື້ອມໃສ ບຸກຄົນນີ້ຮຽກວ່າ ຜູ້ຖືຄວາມເສົ້າໝອງເປັນປະມານເຫຼື້ອມໃສໃນຄວາມເສົ້າໝອງ

ບຸກຄົນຜູ້ຖືທຳເປັນປະມານເຫຼື້ອມໃສໃນທຳ ເປັນແນວໃດ?

ບຸກຄົນບາງຄົນໃນໂລກນີ້ເຫັນສິນ ສະມາທິ ປັນຍາ ແລ້ວຖືເອົາປະມານໃນສິນເປັນຕົ້ນນັ້ນແລ້ວ ເກີດຄວາມເຫຼື້ອມໃສ ບຸກຄົນນີ້ຮຽກວ່າ ຜູ້ຖືທຳເປັນປະມານ ເຫຼື້ອມໃສໃນທຳ

[໑໗໖] ບຸກຄົນຜູ້ປະຕິບັດເພື່ອເກື້ອກູນຕົນເອງ ແຕ່ບໍ່ປະຕິບັດເພື່ອເກື້ອກູນຜູ້ອື່ນ ເປັນແນວໃດ?

ບຸກຄົນບາງຄົນໃນໂລກນີ້ຕົນເອງເປັນຜູ້ເຖິງພ້ອມດ້ວຍສິນແຕ່ບໍ່ຊັກຊວນຜູ້ອື່ນໃຫ້ເຖິງພ້ອມດ້ວຍສິນ ຕົນເອງເປັນຜູ້ເຖິງພ້ອມດ້ວຍສະມາທິແຕ່ບໍ່ຊັກຊວນຜູ້ອື່ນໃຫ້ເຖິງພ້ອມດ້ວຍສະມາທິ ຕົນເອງເປັນຜູ້ເຖິງພ້ອມດ້ວຍປັນຍາແຕ່ບໍ່ຊັກຊວນຜູ້ອື່ນໃຫ້ເຖິງພ້ອມດ້ວຍປັນຍາ ຕົນເອງເປັນຜູ້ເຖິງພ້ອມດ້ວຍວິມຸດຕິແຕ່ບໍ່ຊັກຊວນຜູ້ອື່ນໃຫ້ເຖິງພ້ອມດ້ວຍວິມຸດຕິ ຕົນເອງເປັນຜູ້ເຖິງພ້ອມດ້ວຍວິມຸດຕິຍານທັດສະນະແຕ່ບໍ່ຊັກຊວນຜູ້ອື່ນໃຫ້ເຖິງພ້ອມດ້ວຍວິມຸດຕິຍານທັດສະນະ ບຸກຄົນເຊັ່ນນີ້ຊື່ວ່າຜູ້ປະຕິບັດເພື່ອເກື້ອກູນຕົນເອງແຕ່ບໍ່ປະຕິບັດເພື່ອເກື້ອກູນຜູ້ອື່ນ

ບຸກຄົນຜູ້ປະຕິບັດເພື່ອເກື້ອກູນຜູ້ອື່ນແຕ່ບໍ່ປະຕິບັດເພື່ອເກື້ອກູນຕົນເອງ ເປັນແນວໃດ?

ບຸກຄົນບາງຄົນໃນໂລກນີ້ຕົນເອງເປັນຜູ້ບໍ່ເຖິງພ້ອມດ້ວຍສີນ ແຕ່ຊັກຊວນຜູ້ອື່ນໃຫ້ເຖິງພ້ອມດ້ວຍສີນ ຕົນເອງເປັນຜູ້ບໍ່ເຖິງພ້ອມດ້ວຍສະມາທິແຕ່ຊັກຊວນຜູ້ອື່ນໃຫ້ເຖິງພ້ອມດ້ວຍສະມາທິ ຕົນເອງເປັນຜູ້ບໍ່ເຖິງພ້ອມດ້ວຍປັນຍາແຕ່ຊັກຊວນຜູ້ອື່ນໃຫ້ເຖິງພ້ອມດ້ວຍປັນຍາ ຕົນເອງເປັນຜູ້ບໍ່ເຖິງພ້ອມດ້ວຍວິມຸດຕິແຕ່ຊັກຊວນຜູ້ອື່ນໃຫ້ເຖິງພ້ອມດ້ວຍວິມຸດຕິ ຕົນເອງເປັນຜູ້ບໍ່ເຖິງພ້ອມດ້ວຍວິມຸດຕິຍານທັດສະນະ ແຕ່ຊັກຊວນຜູ້ອື່ນໃຫ້ເຖິງພ້ອມດ້ວຍວິມຸດຕິຍານທັດສະນະ ບຸກຄົນເຊັ່ນນີ້ຊື່ວ່າ ຜູ້ປະຕິບັດເພື່ອເກື້ອກູນຜູ້ອື່ນແຕ່ບໍ່ປະຕິບັດເພື່ອເກື້ອກູນຕົນເອງ

ບຸກຄົນຜູ້ປະຕິບັດເພື່ອເກື້ອກູນຕົນເອງແລະປະຕິບັດເພື່ອເກື້ອກູນຜູ້ອື່ນ ເປັນແນວໃດ?

ບຸກຄົນບາງຄົນໃນໂລກນີ້ຕົນເອງເປັນຜູ້ເຖິງພ້ອມດ້ວຍສີນ ແລະຊັກຊວນຜູ້ອື່ນໃຫ້ເຖິງພ້ອມດ້ວຍສີນ ຕົນເອງເປັນຜູ້ເຖິງພ້ອມດ້ວຍສະມາທິ ແລະຊັກຊວນຜູ້ອື່ນໃຫ້ເຖິງພ້ອມດ້ວຍສະມາທິ ຕົນເອງເປັນຜູ້ເຖິງພ້ອມດ້ວຍປັນຍາແລະຊັກຊວນຜູ້ອື່ນໃຫ້ເຖິງພ້ອມດ້ວຍປັນຍາ ຕົນເອງເປັນຜູ້ເຖິງພ້ອມດ້ວຍວິມຸດຕິແລະຊັກຊວນຜູ້ອື່ນໃຫ້ເຖິງພ້ອມດ້ວຍວິມຸດຕິ ຕົນເອງເປັນຜູ້ເຖິງພ້ອມດ້ວຍວິມຸດຕິຍານທັດສະນະ ແລະຊັກຊວນຜູ້ອື່ນໃຫ້ເຖິງພ້ອມດ້ວຍວິມຸດຕິຍານທັດສະນະ ບຸກຄົນເຊັ່ນນີ້ຊື່ວ່າຜູ້ປະຕິບັດເພື່ອເກື້ອກູນຕົນເອງ ແລະປະຕິບັດເພື່ອເກື້ອກູນຜູ້ອື່ນ

ບຸກຄົນຜູ້ບໍ່ປະຕິບັດເພື່ອເກື້ອກູນຕົນເອງ ແລະບໍ່ປະຕິບັດເພື່ອເກື້ອກູນຜູ້ອື່ນ ເປັນແນວໃດ?

ບຸກຄົນບາງຄົນໃນໂລກນີ້ຕົນເອງເປັນຜູ້ບໍ່ເຖິງພ້ອມດ້ວຍສີນແລະບໍ່ຊັກຊວນຜູ້ອື່ນໃຫ້ເຖິງພ້ອມດ້ວຍສີນ ຕົນເອງເປັນຜູ້ບໍ່ເຖິງພ້ອມດ້ວຍສະມາທິແລະບໍ່ຊັກຊວນຜູ້ອື່ນໃຫ້ເຖິງພ້ອມດ້ວຍສະມາທິ ຕົນເອງເປັນຜູ້ບໍ່ເຖິງພ້ອມດ້ວຍປັນຍາແລະບໍ່ຊັກຊວນຜູ້ອື່ນໃຫ້ເຖິງພ້ອມດ້ວຍປັນຍາ ຕົນເອງເປັນຜູ້ບໍ່ເຖິງພ້ອມດ້ວຍວິມຸດຕິແລະບໍ່ຊັກຊວນຜູ້ອື່ນໃຫ້ເຖິງພ້ອມດ້ວຍວິມຸດຕິ ຕົນເອງເປັນຜູ້ບໍ່ເຖິງພ້ອມດ້ວຍວິມຸດຕິຍານທັດສະນະ ແລະບໍ່ຊັກຊວນຜູ້ອື່ນໃຫ້ເຖິງພ້ອມດ້ວຍວິມຸດຕິຍານທັດສະນະ ບຸກຄົນເຊັ່ນນີ້ຊື່ວ່າຜູ້ບໍ່ປະຕິບັດເພື່ອເກື້ອກູນຕົນເອງແລະບໍ່ປະຕິບັດເພື່ອເກື້ອກູນຜູ້ອື່ນ

[໑໗໔] ບຸກຄົນຜູ້ເຮັດຕົນໃຫ້ເດືອດຮ້ອນ ໝັ່ນປະກອບການເຮັດຕົນໃຫ້ເດືອດຮ້ອນ ເປັນແນວໃດ?

ບຸກຄົນບາງຄົນໃນໂລກນີ້ເປັນຄົນເປືອຍ ບໍ່ມີມາຣະຍາດ ເລຍມື ເຂົາເຊີນມາຮັບພິກສາກໍບໍ່ມາ ເຂົາເຊີນໃຫ້ຢຸດກໍບໍ່ຢຸດ ບໍ່ຮັບພິກສາທີ່ເຂົາແບ່ງໄວ້ກ່ອນ ບໍ່ຮັບພິກສາທີ່ເຂົາເຈາະຈົງເຮັດໄວ້ ບໍ່ຍິນດີກິດນິມົນ ບໍ່ຮັບພິກສາປາກໝໍ້ ບໍ່ຮັບພິກສາຈາກກະຕ່າ ບໍ່ຮັບພິກສາກວມທໍຣະນີປະຕູ ບໍ່ຮັບພິກສາກວມທ່ອນໄມ້ ບໍ່ຮັບພິກສາກວມສາກ ບໍ່ຮັບພິກສາທີ່ຄົນສອງຄົນບໍຣິໂພກຢູ່ ບໍ່ຮັບພິກສາຂອງຍິງຖືພາ ບໍ່ຮັບພິກສາຂອງແມ່ຍິງທີ່ກຳລັງໃຫ້ລູກດື່ມນົມ ບໍ່ຮັບພິກສາຂອງແມ່ຍິງທີ່ກັ້ງວພາບຸຣຸດ ບໍ່ຮັບພິກສາທີ່ນັດໝາຍກັນເຮັດໄວ້ ບໍ່ຮັບພິກສາໃນບ່ອນທີ່ຮັບລ້ຽງໝາ ບໍ່ຮັບພິກສາໃນ

ບ່ອນທີ່ມີແມງວັນໄຕ່ຕອມເປັນກຸ່ມ ບໍ່ຮັບປາ ບໍ່ຮັບຊີ້ນ ບໍ່ດື່ມສຸຣາ ບໍ່ດື່ມເມໄຣ ບໍ່ດື່ມນ້ຳໝັກດອງ ເຂົາຮັບພິກສາສະເພາະເຮືອນຫຼັງດຽວ ລ້ຽງອັດຕະພາບດ້ວຍເຂົ້າຄຳດຽວ ຮັບພິກສາທີ່ເຮືອນ ໒ ຫຼັງ ລ້ຽງອັດຕະພາບດ້ວຍເຂົ້າ ໒ ຄຳ ຯລຯ ຫຼືຮັບພິກສາທີ່ເຮືອນ ໗ ຫຼັງ ລ້ຽງອັດຕະພາບດ້ວຍເຂົ້າ ໗ ຄຳ ລ້ຽງອັດຕະພາບດ້ວຍພິກສາໃນຖາດນ້ອຍໃບດຽວແດ່ ລ້ຽງອັດຕະພາບດ້ວຍພິກສາໃນຖາດນ້ອຍ ໒ ໃບແດ່ ຯລຯ ລ້ຽງອັດຕະພາບດ້ວຍພິກສາໃນຖາດນ້ອຍ ໗ ໃບແດ່ ກິນອາຫານທີ່ເກັບຄ້າງໄວ້ວັນດຽວແດ່ ກິນອາຫານທີ່ເກັບຄ້າງໄວ້ ໒ ວັນແດ່ ຯລຯ ກິນອາຫານທີ່ເກັບຄ້າງໄວ້ ໗ ວັນແດ່ ເຂົາໝັ່ນປະກອບໃນການບໍຣິໂພກທີ່ວຽນມາຮອດເຄິ່ງເດືອນແນວນີ້

ເຂົາກິນຜັກດອງເປັນອາຫານແດ່ ກິນເຂົ້າຟ່າງເປັນອາຫານແດ່ ກິນໝາກເດືອຍເປັນອາຫານແດ່ ກິນເຂົ້າກາກເປັນອາຫານແດ່ ກິນຢາງໄມ້ເປັນອາຫານແດ່ ກິນຮຳເປັນອາຫານແດ່ ກິນເຂົ້າກົ້ນໝໍ້ເປັນອາຫານແດ່ ກິນກຳຍານເປັນອາຫານແດ່ ກິນຫຍ້າເປັນອາຫານແດ່ ກິນມູນງົວເປັນອາຫານແດ່ ກິນຮາກໄມ້ແລະໝາກໄມ້ໃນປ່າເປັນອາຫານແດ່ ກິນໝາກໄມ້ທີ່ຫຼົ່ນລ້ຽງອັດຕະພາບ ເຂົານຸ່ງຫົ່ມຜ້າປ່ານແດ່ ນຸ່ງຫົ່ມຜ້າປົນກັນແດ່ ນຸ່ງຫົ່ມຜ້າຫໍ່ສົບແດ່ ນຸ່ງຫົ່ມຜ້າບັງສຸກຸນແດ່ ນຸ່ງຫົ່ມຜ້າເປືອກໄມ້ແດ່ ນຸ່ງຫົ່ມໜັງເສືອແດ່ ນຸ່ງຫົ່ມໜັງເສືອທີ່ມີເລັບຕິດຢູ່ແດ່ ນຸ່ງຫົ່ມຄາກອງແດ່ ນຸ່ງຫົ່ມຜ້າເປືອກປໍຄາກອງແດ່ ນຸ່ງຫົ່ມຜ້າໝາກຄາກອງແດ່ ນຸ່ງຫົ່ມຜ້າກຳພົນເຮັດດ້ວຍຜົມຄົນແດ່ ນຸ່ງຫົ່ມຜ້າກຳພົນເຮັດດ້ວຍຂົນສັດຮ້າຍແດ່ ນຸ່ງຫົ່ມຜ້າເຮັດດ້ວຍຂົນປີກນົກເຄົ້າແດ່ ລົກຜົມແລະໜວດ ໝັ່ນປະກອບການລົກຜົມແລະໜວດແດ່ ຢືນຢ່າງດຽວປະຕິເສດການນັ່ງແດ່ ນັ່ງຍອງຍໍ້ປະກອບຄວາມພຽນດ້ວຍການນັ່ງຍອງຍໍ້ແດ່ ນອນເທິງໜາມ ສຳເລັດການນອນເທິງໜາມແດ່ ອາບນ້ຳວັນລະ ໓ ຄັ້ງ ໝັ່ນປະກອບການລົງນ້ຳແດ່ ເຂົາໝັ່ນປະກອບການເຮັດຮ່າງກາຍໃຫ້ເດືອດຮ້ອນຫຼາຍວິທີດັ່ງກ່າວນີ້ຢູ່ ບຸກຄົນຜູ້ເຮັດຕົນໃຫ້ເດືອດຮ້ອນໝັ່ນປະກອບໃນການເຮັດຕົນໃຫ້ເດືອດຮ້ອນ ເປັນແນວນີ້

[໑໗໕] ບຸກຄົນຜູ້ເຮັດຄົນອື່ນໃຫ້ເດືອດຮ້ອນ ໝັ່ນປະກອບໃນການເຮັດຜູ້ອື່ນໃຫ້ເດືອດຮ້ອນ ເປັນແນວໃດ?

ບຸກຄົນບາງຄົນໃນໂລກນີ້ເປັນຜູ້ຂ້າແບ້ ຂ້າໝູ ເປັນນາຍພານນົກ ເປັນນາຍພານເນື້ອ ເປັນຊາວປະມົງ ເປັນໂຈນ ເປັນເພັດຊະຄາດ ເປັນຄົນຂ້າງົວ ເປັນຜູ້ຄຸມ ຫຼື ເປັນຜູ້ທຳກຳອັນຫຍາບຊ້າຊະນິດໃດຊະນິດໜຶ່ງກໍຕາມ ບຸກຄົນຜູ້ເຮັດຄົນອື່ນໃຫ້ເດືອດຮ້ອນ ໝັ່ນປະກອບໃນການເຮັດຜູ້ອື່ນໃຫ້ເດືອດຮ້ອນ ເປັນແນວນີ້

[໑໗໖] ບຸກຄົນຜູ້ເຮັດຕົນໃຫ້ເດືອດຮ້ອນ ໝັ່ນປະກອບໃນການເຮັດຕົນໃຫ້ເດືອດຮ້ອນ ແລະເຮັດຜູ້ອື່ນໃຫ້ເດືອດຮ້ອນ ໝັ່ນປະກອບໃນການເຮັດຜູ້ອື່ນໃຫ້ເດືອດຮ້ອນ ເປັນແນວໃດ?

ບຸກຄົນບາງຄົນໃນໂລກນີ້ເປັນພຣະຣາຊາມະຫາກະສັດໄດ້ຮັບມູດທາພິເສກ ຫຼື ວ່າ ເປັນພາມມະຫາສານ ເຂົາໃຫ້ສ້າງສັນຖາຄານໃໝ່ທາງທິດຕາເວັນອອກແຫ່ງພຣະນະຄອນແລ້ວແຖ

ຜົມແລະໜວດ ນຸ່ງຫົ່ມໜັງສັດມີເລັບ ຊະໂລມກາຍດ້ວຍເນີຍໃສແລະນ້ຳມັນ ເກົາຫຼັງດ້ວຍເຂົາສັດ ເຂົ້າໄປສູ່ສັນຖາຄານໃໝ່ພ້ອມດ້ວຍມະເຫສີ ແລະພາມຜູ້ເປັນປຸໂຣຫິດ ເຂົາສຳເລັດການນອນເທິງພື້ນອັນປາສະຈາກການປູລາດໄວ້ດ້ວຍມູນງົວສົດ ພຣະຣາຊາໃຫ້ພຣະຊົນຊີບເປັນໄປດ້ວຍນ້ຳນົມທີ່ມີຢູ່ໃນເຕົ້າທີ່ໜຶ່ງຂອງງົວແມ່ຕົວໜຶ່ງທີ່ມີລູກອ່ອນ ພຣະມະເຫສີໃຫ້ພຣະຊົນຊີບເປັນໄປດ້ວຍນ້ຳນົມທີ່ມີຢູ່ໃນເຕົ້າທີ ໔ ພາມຜູ້ເປັນປຸໂຣຫິດໃຫ້ອັດຕະພາບເປັນໄປດ້ວຍນ້ຳນົມທີ່ມີຢູ່ໃນເຕົ້າທີ ၃ ພຣະຣາຊາຊົງບູຊາໄຟດ້ວຍນ້ຳນົມທີ່ມີຢູ່ໃນເຕົ້າທີ ໔ ງົວນ້ອຍໃຫ້ອັດຕະພາບເປັນໄປດ້ວຍນ້ຳນົມທີ່ເຫຼືອພຣະຣາຊານັ້ນຕັດແນວນີ້ວ່າ “ທ່ານທັງຫຼາຍຈົ່ງຂ້າງົວເທົ່ານີ້ ຈົ່ງຂ້າງົວເຖິກນ້ອຍເທົ່ານີ້ ຈົ່ງຂ້າງົວແມ່ນ້ອຍເທົ່ານີ້ ຈົ່ງຂ້າແບ້ເທົ່ານີ້ ຈົ່ງຂ້າແກະເທົ່ານີ້ເພື່ອບູຊາຍັນ (ຈົ່ງຂ້າມ້າເທົ່ານີ້ເພື່ອບູຊາຍັນ) ຈົ່ງຕັດໄມ້ແລະກ່ຽວຫຍ້າຄາເທົ່ານີ້ເພື່ອກັ້ງແລະປູລາດ”

ແມ່ນເຫຼົ່າຊົນທີ່ເປັນທາດ ເປັນຄົນຮັບໃຊ້ ເປັນຄົນງານຂອງພຣະຣາຊານັ້ນ ຍ່ອມສະດຸ້ງຕໍ່ອາດຍາ ສະດຸ້ງຕໍ່ໄພ ມີໜ້ານອງດ້ວຍນ້ຳຕາ ຮ້ອງໄຫ້ເຮັດວຽກຢູ່ ບຸກຄົນຜູ້ເຮັດຕົນໃຫ້ເດືອດຮ້ອນ ໝັ່ນປະກອບໃນການເຮັດຕົນໃຫ້ເດືອດຮ້ອນ ແລະເຮັດຜູ້ອື່ນໃຫ້ເດືອດຮ້ອນ ໝັ່ນປະກອບໃນການເຮັດຜູ້ອື່ນໃຫ້ເດືອດຮ້ອນ ເປັນແນວນີ້

[໑໗໗] ບຸກຄົນຜູ້ບໍ່ເຮັດຕົນໃຫ້ເດືອດຮ້ອນ ບໍ່ໝັ່ນປະກອບໃນການເຮັດຕົນໃຫ້ເດືອດຮ້ອນ ແລະບໍ່ເຮັດຜູ້ອື່ນໃຫ້ເດືອດຮ້ອນ ບໍ່ໝັ່ນປະກອບໃນການເຮັດຜູ້ອື່ນໃຫ້ເດືອດຮ້ອນ ເປັນແນວໃດ?

ບຸກຄົນນັ້ນບໍ່ເຮັດຕົນໃຫ້ເດືອດຮ້ອນ ບໍ່ເຮັດຜູ້ອື່ນໃຫ້ເດືອດຮ້ອນ ເປັນຜູ້ບໍ່ຫິວ ດັບຮ້ອນເຢັນໃຈ ສະເຫວີຍສຸກ ມີຕົນອັນປະເສີດຢູ່ໃນປັດຈຸບັນພຣະຕະຖາຄົດເຈົ້າສະເດັດອຸບັດຂຶ້ນມາໃນໂລກນີ້ເປັນພຣະອະຣະຫັນ ຕັດສະຮູ້ດ້ວຍພຣະອົງເອງໂດຍຊອບ ພຽບພ້ອມດ້ວຍວິດຊາແລະຈະຣະນະ ສະເດັດໄປດີ ຊົງຮູ້ແຈ້ງໂລກ ເປັນສາຣະຖີຝຶກຜູ້ທີ່ຄວນຝຶກໄດ້ຢ່າງປະເສີດ ເປັນສາດສະດາຂອງເທວະດາແລະມະນຸດທັງຫຼາຍ ເປັນພຣະພຸດທະເຈົ້າ ເປັນພຣະຜູ້ມີພຣະພາກເຈົ້າ ພຣະອົງຊົງຮູ້ແຈ້ງໂລກນີ້ພ້ອມທັງເທວະໂລກ ມານໂລກ ພົມມະໂລກ ແລະໝູ່ສັດພ້ອມທັງສະມະນະພາມ ເທວະດາແລະມະນຸດດ້ວຍພຣະອົງເອງແລ້ວປະກາດໃຫ້ຜູ້ອື່ນຮູ້ຕາມ ຊົງສະແດງທຳມີຄວາມງາມໃນເບື້ອງຕົ້ນ ງາມໃນທ່າມກາງ ແລະງາມໃນບ່ອນສຸດ ຊົງປະກາດພົມມະຈັນພ້ອມທັງອັດຖະແລະພະຍັນຊະນະບໍລິສຸດ ບໍລິບູນຄົບຖ້ວນ ຄະຫະບໍດີ ບຸດແຫ່ງຄະຫະບໍດີ ຫຼື ອະນຸຊົນໃນຕະກູນໃດຕະກູນໜຶ່ງໄດ້ສະດັບທຳນັ້ນ ເມື່ອໄດ້ສະດັບທຳນັ້ນແລ້ວເກີດສັດທາໃນພຣະຕະຖາຄົດເຈົ້າ ເມື່ອມີສັດທາຍ່ອມຄິດວ່າ “ການຢູ່ຄອງເຮືອນເປັນເລື້ອງອຶດອັດເປັນທາງແຫ່ງທຸລີ ການບວດເປັນທາງປອດໂປ່ງ ການທີ່ຜູ້ຄອງເຮືອນຈະປະພຶດພົມມະຈັນໃຫ້ບໍລິສຸດບໍລິບູນຄົບຖ້ວນເໝືອນຫອຍສັງທີ່ຂັດດີແລ້ວບໍ່ແມ່ນເຮັດໄດ້ງ່າຍ ທາງທີ່ດີ ເຮົາຄວນແຖຜົມແລະໜວດ ນຸ່ງຫົ່ມຜ້າກາສາວະພັດອອກຈາກເຮືອນບວດເປັນບັນພະຊິດເຖີດ”

ຕໍ່ມາເຂົາລະຖິ້ມກອງໂພຄະສົມບັດນ້ອຍໃຫຍ່ ແລະເຄືອຍາດນ້ອຍໃຫຍ່ ແຖຜົມແລະໜວດນຸ່ງຫົ່ມຜ້າກາສາວະພັດອອກຈາກເຮືອນບວດເປັນບັນພະຊິດ

[໑໘໘] ບຸກຄົນນັ້ນບວດແລ້ວແນວນີ້ ເຖິງຄວາມເປັນຜູ້ມີສິກຂາ ແລະສາຊີບແຫ່ງພິກຂຸທັງຫຼາຍ ລະເວັ້ນຂາດຈາກການຂ້າສັດ ຄື ວາງທັນດາວຸດແລະສັດຕາວຸດ ມີຄວາມລະອາຍ ມີຄວາມອີດູ ຫວັງປະໂຫຍດເກື້ອກູນຕໍ່ສັບພະສັດຢູ່

ລະເວັ້ນຂາດຈາກການຖືເອົາສິ່ງຂອງທີ່ເຈົ້າຂອງເຂົາບໍ່ໄດ້ໃຫ້ ຄື ຮັບເອົາແຕ່ສິ່ງຂອງທີ່ເຂົາໃຫ້ ມຸ້ງຫວັງແຕ່ຂອງທີ່ເຂົາໃຫ້ ບໍ່ເປັນຄົນຂີ້ລັກ ເປັນຄົນສະອາດຢູ່

ລະພຶດຕິກຳອັນເປັນຂ້າເສິກຕໍ່ພົມມະຈັນ ຄື ປະພຶດພົມມະຈັນ ເວັ້ນຫ່າງໄກເມຖຸນທຳອັນເປັນກິດຂອງຊາວບ້ານ

ລະເວັ້ນຂາດຈາກການເວົ້າຕົວະ ຄື ເວົ້າແຕ່ຄຳສັດ ດຳຣົງຄວາມສັດ ມີຄຳເວົ້າທີ່ມີຫຼັກເຊື່ອຖືໄດ້ ບໍ່ຫຼອກລວງຊາວໂລກ

ລະເວັ້ນຂາດຈາກຄຳສັບສໍ່ ຄື ຟັງຄວາມຈາກຝ່າຍນີ້ແລ້ວ ບໍ່ໄປບອກຝ່າຍນັ້ນ ເພື່ອທຳລາຍຝ່າຍນີ້ ຫຼື ຟັງຄວາມຝ່າຍນັ້ນແລ້ວບໍ່ມາບອກຝ່າຍນີ້ ເພື່ອທຳລາຍຝ່າຍນັ້ນ ສະໝານຄົນທີ່ແຕກແຍກກັນ ສົ່ງເສີມຄົນທີ່ປອງດອງກັນ ຊື່ນຊົມ ຍິນດີ ເພີດເພີນຕໍ່ຜູ້ທີ່ສາມັກຄີກັນ ເວົ້າແຕ່ຄຳເວົ້າທີ່ສ້າງສັນຄວາມສາມັກຄີ

ລະເວັ້ນຂາດຈາກຄຳຫຍາບ ຄື ເວົ້າແຕ່ຄຳບໍ່ມີໂທດ ມ່ວນຫູ ໄພເລາະຈັບໃຈ ເປັນຄຳຊາວເມືອງ ຄົນສ່ວນຫຼາຍຮັກແພງ ພໍໃຈ

ລະເວັ້ນຂາດຈາກຄຳເພັ້ເຈີ້ ຄື ເວົ້າຖືກເວລາ ເວົ້າຄຳຈິງ ເວົ້າອີງປະໂຫຍດ ເວົ້າອີງທຳເວົ້າອີງວິໄນ ເວົ້າຄຳທີ່ມີຫຼັກຖານ ມີບ່ອນອ້າງອີງ ມີບ່ອນກຳນົດ ປະກອບດ້ວຍປະໂຫຍດເໝາະແກ່ການເວລາ

[໑໘໙] ພິກຂຸນັ້ນເປັນຜູ້ເວັ້ນຂາດຈາກການພາກພິຊະຄາມແລະພູຕະຄາມ ສັນຄາບດຽວບໍ່ສັນໃນເວລາກາງຄືນ ເວັ້ນຂາດຈາກການສັນໃນເວລາວິການ

ເວັ້ນຂາດຈາກການຟ້ອນຣຳຂັບຮ້ອງປະໂຄມດົນຕີ ແລະເບິ່ງການລະຫຼິ້ນອັນເປັນຂ້າເສິກແກ່ກຸສົນ

ເວັ້ນຂາດການທັດຊົງ ປະດັບຕົບແຕ່ງຮ່າງກາຍດ້ວຍພວງດອກໄມ້ຂອງຫອມ ແລະເຄື່ອງປະທິນຜິວອັນເປັນລັກສະນະແຫ່ງການແຕ່ງຕົວ

ເວັ້ນຂາດຈາກ ບ່ອນນອນສູງໃຫຍ່

ເວັ້ນຂາດຈາກການ ຮັບຄຳແລະເງິນ

ເວັ້ນຂາດຈາກການ ຮັບທັນຍາຫານດິບ

ເວັ້ນຂາດຈາກການ ຮັບຊີ້ນດິບ

ເວັ້ນຂາດຈາກການ ຮັບສະຕີແລະກຸມາຣີ
ເວັ້ນຂາດຈາກການ ຮັບທາດຍິງແລະທາດຊາຍ
ເວັ້ນຂາດຈາກການ ຮັບແບ້ແລະແກະ
ເວັ້ນຂາດຈາກການ ຮັບໄກ່ແລະໝູ
ເວັ້ນຂາດຈາກການ ຮັບຊ້າງ ງົວ ມ້າ ແລະລາ
ເວັ້ນຂາດຈາກການ ຮັບຮົ້ວສວນ ໄຮ່ນາ ແລະທີ່ດິນ
ເວັ້ນຂາດຈາກການ ເຮັດໜ້າທີ່ເປັນຕົວແທນແລະຜູ້ສື່ສານ
ເວັ້ນຂາດຈາກການ ຊື້ຂາຍ
ເວັ້ນຂາດຈາກການ ໂກງດ້ວຍຕາຊິງ ດ້ວຍຂອງປອມ ແລະດ້ວຍເຄື່ອງຕວງວັດ
ເວັ້ນຂາດຈາກການຮັບ ສິນບົນ ການລໍ້ລວງ ແລະການຫຼອກລວງ
ເວັ້ນຂາດຈາກການ ຕັດ (ອະໄວຍະວະ) ການຂ້າ ການຈອງຈຳ ການຕີແຍ່ງຊີງ ການປຸ້ນແລະການຂູ່ກັນໂຊກ

[໑໗໐] ພິກຂຸນັ້ນເປັນຜູ້ສັນໂດດດ້ວຍຈີວອນພໍຄຸມຮ່າງກາຍ ແລະບິນທະບາດພໍອີ່ມທ້ອງ ທ່ານຈະໄປສູ່ບ່ອນໃດ ໆ ກໍໄປໄດ້ທັນທີ ເໝືອນນົກຕ້ອງການບິນໄປ ກໍມີແຕ່ປີກເປັນພາຣະ ທ່ານປະກອບດ້ວຍສີລະຂັນອັນເປັນອະຣິຍະນີ້ແລ້ວຍ່ອມສະເຫວີຍສຸກອັນປາສະຈາກໂທດໃນພາຍໃນ

[໑໗໑] ພິກຂຸນັ້ນເຫັນຮູບທາງຕາແລ້ວ ບໍ່ລວມຖື ບໍ່ແຍກຖື ຍ່ອມປະຕິບັດເພື່ອສັງລວມຈັກຂຸນຊີເຊິ່ງເມື່ອບໍ່ສັງລວມແລ້ວ ກໍຈະເປັນເຫດໃຫ້ບາບອະກຸສົນທຳຄືອະພິດຊາແລະໂທມະນັດຄອບງຳໄດ້ ຈຶ່ງຮັກສາຈັກຂຸນຊີ ເຖິງຄວາມສັງລວມໃນຈັກຂຸນຊີ ຟັງສຽງ ທາງຫູ ຯລຯ ດົມກິ່ນທາງດັງ ຯລຯ ຊີມຣົດທາງລີ້ນ ຯລຯ ຖືກຕ້ອງໂຜດຖັບພະທາງກາຍ ຯລຯ ຮູ້ທຳມາຣົມທາງໃຈແລ້ວ ບໍ່ລວມຖື ບໍ່ແຍກຖື ຍ່ອມປະຕິບັດເພື່ອສັງລວມມະນິນຊີ ເຊິ່ງເມື່ອບໍ່ສັງລວມແລ້ວກໍຈະເປັນເຫດໃຫ້ບາບອະກຸສົນທຳຄືອະພິດຊາແລະໂທມະນັດຄອບງຳໄດ້ ຈຶ່ງຮັກສາມະນິນຊີ ເຖິງຄວາມສັງລວມໃນມະນິນຊີ ທ່ານປະກອບດ້ວຍການສັງລວມອິນຊີ ອັນເປັນອະຣິຍະນີ້ຍ່ອມສະເຫວີຍສຸກອັນບໍ່ປະປົນກັບກິເລດໃນພາຍໃນ

[໑໗໔] ພິກຂຸນັ້ນມີຄວາມຮູ້ສຶກຕົວໃນການກ້າວໄປ ການຖອຍກັບ ການແລເບິ່ງ ການຫຼຽວເບິ່ງ ການຄູ້ເຂົ້າ ການຢຽດອອກ ການຄອງສັງຄາຕິ ບາດ ແລະຈີວອນ ການສັນການດື່ມ ການຫຍໍ້າ ການຊີມ ການຖ່າຍອຸດຈາຣະ ປັດສາວະ ການຍ່າງ ການຢືນ ການນັ່ງ ການນອນ ການຕື່ນ ການເວົ້າ ການນິ້ງ ທ່ານປະກອບດ້ວຍອະຣິຍະສີນຂັນ ອະຣິຍະອິນຊີສັງວອນລະວັງ ອະຣິຍະສະຕິສຳປະຊັນຍະ ແລະອະຣິຍະສັນໂດດນີ້ ພັກຢູ່ໃນເສນາສະນະອັນງຽບສະຫງັດ ຄື ປ່າ ເຫງົ້າໄມ້ ພູເຂົາ ຮ່ອມພູ ຖໍ້າ ປ່າຊ້າ ປ່າຮົກທຶບ ກາງແຈ້ງ ກອງເຟືອງ ທ່ານກັບຈາກບິນ

ທະບາດ ພາຍຫຼັງສັນອາຫານສຳເລັດແລ້ວ ນັ່ງຄູ້ບັນລັງ ຕັ້ງກາຍກົງດຳຣົງສະຕິໃຫ້ໝັ້ນ ທ່ານລະອະພິດຊາໃນໂລກ ມີໃຈປາສະຈາກອະພິດຊາ ຊຳຣະຈິດໃຫ້ໝົດຈົດຈາກອະພິດຊາ ລະຄວາມມຸ້ງຮ້າຍຄືພະຍາບາດ ມີຈິດບໍ່ພະຍາບາດ ມຸ້ງປະໂຫຍດເກື້ອກູນຕໍ່ສັບພະສັດຢູ່ ຊຳຣະຈິດໃຫ້ໝົດຈົດຈາກຄວາມມຸ້ງຮ້າຍຄືພະຍາບາດ ລະຖີນະມິດທະ ປາສະຈາກຖີນະມິດທະ ກຳນົດແສງສະຫວ່າງມີສະຕິສຳປະຊັນຍະ ຊຳຣະຈິດໃຫ້ໝົດຈົດຈາກຖີນະມິດທະ ລະອຸດທັດຈະກຸກກຸດຈະ ເປັນຜູ້ບໍ່ຟຸ້ງຊ່ານ ມີຈິດສະຫງົບພາຍໃນ ຊຳຣະຈິດໃຫ້ໝົດຈົດຈາກອຸດທັດຈະກຸກກຸດຈະ ລະວິຈິກິດສາ ຂ້າມພົ້ນວິຈິກິດສາໄດ້ແລ້ວ ບໍ່ມີຄວາມສົງໄສໃນກຸສົນທຳທັງຫຼາຍຢູ່ ຊຳຣະຈິດໃຫ້ໝົດຈົດຈາກວິຈິກິດສາ

[໑໗໓] ພິກຂຸນັ້ນລະນິວອນ ໕ ປະການເຫຼົ່ານີ້ທີ່ເຮັດໃຫ້ຈິດເສົ້າໝອງ ບັ່ນທອນກຳລັງປັນຍາ ສະຫງັດຈາກກາມ ສະຫງັດຈາກສະພາວະທຳທີ່ເປັນອະກຸສົນ ບັນລຸປະຖົມຊານທີ່ມີວິຕົກມີວິຈານ ມີປີຕິແລະສຸກອັນເກີດຈາກວິເວກຢູ່ ຍ້ອນວິຕົກວິຈານສະຫງົບຣະງັບໄປບັນລຸທຸຕິຍະຊານອັນມີຄວາມຜ່ອງໃສໃນພາຍໃນ ມີພາວະທີ່ຈິດເປັນໜຶ່ງຜຸດຂຶ້ນ ບໍ່ມີວິຕົກ ບໍ່ມີວິຈານ ມີປີຕິແລະສຸກເກີດຈາກສະມາທິຢູ່ ຍ້ອນປີຕິຈາງຄາຍອອກ ມີຈິດເປັນອຸເປກຂາ ມີສະຕິແລະມີສຳປະຊັນຍະຢູ່ ແລະສະເຫວີຍສຸກທາງກາຍ ບັນລຸຕະຕິຍະຊານທີ່ພຣະອະຣິຍະກ່າວວ່າ "ມີຈິດເປັນອຸເປກຂາມີສະຕິຢູ່ເປັນສຸກ" ຍ້ອນລະສຸກແລະທຸກໄດ້ ຍ້ອນໂສມະນັດແລະໂທມະນັດດັບໄປ ບັນລຸຈະຕຸດຖະຊານອັນບໍ່ມີທຸກ ບໍ່ມີສຸກ ມີຄວາມບໍລິສຸດແຫ່ງສະຕິອັນເກີດຈາກອຸເປກຂາຢູ່

ເມື່ອຈິດເປັນສະມາທິ ບໍລິສຸດ ຜຸດຜ່ອງ ບໍ່ມີກິເລດພຽງດັ່ງເນີນ ປາສະຈາກຄວາມເສົ້າໝອງ ອ່ອນນຸ້ມ ເໝາະແກ່ການໃຊ້ງານ ຕັ້ງໝັ້ນ ບໍ່ຫວັ່ນໄຫວແນວນີ້ ພິກຂຸນັ້ນນ້ອມຈິດໄປເພື່ອບຸບເພນິວາສານຸດສະຕິຍານ ຣະລຶກຊາດກ່ອນໄດ້ຫຼາຍຊາດ ຄື ໑ ຊາດແດ່ ໒ ຊາດແດ່ ໓ ຊາດແດ່ ໔ ຊາດແດ່ ໕ ຊາດແດ່ ໑໐ ຊາດແດ່ ໒໐ ຊາດແດ່ ໓໐ ຊາດແດ່ ໔໐ ຊາດແດ່ ໕໐ ຊາດແດ່ ໑໐໐ ຊາດແດ່ ໑,໐໐໐ ຊາດແດ່ ໑໐໐,໐໐໐ ຊາດແດ່ ຕະຫຼອດສັງສັດຕະກັບເປັນຈຳນວນຫລາຍແດ່ ຕະຫຼອດວິວັດຕະກັບເປັນຈຳນວນຫລາຍແດ່ ຕະຫຼອດສັງວັດຕະກັບເປັນຈຳນວນຫລາຍແດ່ວ່າ "ໃນພົບນັ້ນເຮົາມີຊື່ແນວນັ້ນ ມີຕະກູນ ມີວັນນະ ມີອາຫານ ສະເຫວີຍສຸກ ທຸກແລະມີອາຍຸແນວນັ້ນ ໆ ຈຸດຕິຈາກພົບນັ້ນກໍໄປເກີດໃນພົບນັ້ນ ແມ່ນໃນພົບນັ້ນເຮົາກໍມີຊື່ແນວນັ້ນມີຕະກູນ ມີວັນນະ ມີອາຫານ ສະເຫວີຍສຸກທຸກແລະມີອາຍຸແນວນັ້ນ ໆ ຈຸດຕິຈາກພົບນັ້ນຈຶ່ງມາເກີດໃນພົບນີ້" ທ່ານຣະລຶກຊາດກ່ອນໄດ້ຫຼາຍຊາດພ້ອມທັງລັກສະນະທົ່ວໄປ ແລະຊີວະປະຫວັດແນວນີ້

[໑໗໔] ພິກຂຸນັ້ນເມື່ອຈິດເປັນສະມາທິ ບໍລິສຸດ ຜຸດຜ່ອງ ບໍ່ມີກິເລດພຽງດັ່ງເນີນ ປາສະຈາກຄວາມເສົ້າໝອງ ອ່ອນນຸ້ມ ເໝາະແກ່ການໃຊ້ງານ ຕັ້ງໝັ້ນ ບໍ່ຫວັ່ນໄຫວແນວນີ້ ທ່ານນ້ອມຈິດໄປເພື່ອຈຸຕູປະປາຕະຍານ ເຫັນໝູ່ສັດຜູ້ກຳລັງຈຸຕິ ກຳລັງເກີດ ທັງຊັ້ນຕ່ຳແລະຊັ້ນສູງ ງາມແລະບໍ່ງາມ ເກີດດີແລະເກີດບໍ່ດີ ດ້ວຍຕາທິບອັນບໍລິສຸດເໜືອມະນຸດ ຮູ້ຊັດແຈ້ງເຊິ່ງໝູ່ສັດຜູ້ເປັນ

ໄປຕາມກຳວ່າ "ໝູ່ສັດທີ່ປະກອບດ້ວຍກາຍທຸດຈະຣິດ ວະຈີທຸດຈະຣິດ ແລະມະໂນທຸດຈະຣິດ ຕິຕຽນພຣະອະຣິຍະມີຄວາມເຫັນຜິດ ແລະຊັກຊວນຜູ້ອື່ນໃຫ້ເຮັດກຳຕາມຄວາມເຫັນຜິດ ເຂົາເຫຼົ່ານັ້ນຫຼັງຈາກຕາຍແລ້ວຈະໄປເກີດໃນອະບາຍ ທຸຄະຕິ ວິນິບາດ ນະຣົກ ສ່ວນໝູ່ສັດທີ່ປະກອບດ້ວຍກາຍສຸດຈະຣິດ ວະຈີສຸດຈະຣິດ ມະໂນສຸດຈະຣິດ ບໍ່ຕິຕຽນພຣະອະຣິຍະ ມີຄວາມເຫັນຊອບ ຊັກຊວນຜູ້ອື່ນໃຫ້ເຮັດກຳຕາມຄວາມເຫັນຊອບ ເຂົາເຫຼົ່ານັ້ນຫຼັງຈາກຕາຍແລ້ວຈະໄປເກີດໃນສຸກຄະຕິໂລກສະຫວັນ" ທ່ານເຫັນໝູ່ສັດຜູ້ກຳລັງຈຸຕິ ກຳລັງເກີດ ທັງຊັ້ນຕໍ່າ ແລະຊັ້ນສູງ ງາມແລະບໍ່ງາມ ເກີດດີແລະເກີດບໍ່ດີ ດ້ວຍຕາທິບອັນບໍລິສຸດເໜືອມະນຸດ ຮູ້ຊັດແຈ່ມແຈ້ງເຖິງໝູ່ສັດຜູ້ເປັນໄປຕາມກຳ

[໑໗໕] ພິກຂຸນັ້ນເມື່ອຈິດເປັນສະມາທິ ບໍລິສຸດ ຜຸດຜ່ອງ ບໍ່ມີກິເລດພຽງດັ່ງເນີນ ປາສະຈາກຄວາມເສົ້າໝອງ ອ່ອນນຸ້ມ ເໝາະແກ່ການໃຊ້ງານ ຕັ້ງໝັ້ນ ບໍ່ຫວັ່ນໄຫວແນວນີ້ ນ້ອມຈິດໄປເພື່ອອາສະວັກຂະຍະຍານ ຮູ້ຊັດແຈ້ງຕາມຄວາມເປັນຈິງວ່າ "ນີ້ທຸກ ນີ້ເຫດເກີດແຫ່ງທຸກ ນີ້ຄວາມດັບທຸກ ນີ້ຂໍ້ປະຕິບັດໃຫ້ເຖິງຄວາມດັບທຸກ ນີ້ອາສະວະ ນີ້ເຫດເກີດແຫ່ງອາສະວະ ນີ້ຄວາມດັບອາສະວະ ນີ້ຂໍ້ປະຕິບັດໃຫ້ເຖິງຄວາມດັບອາສະວະ"

ເມື່ອທ່ານຮູ້ເຫັນຢູ່ແນວນີ້ ຈິດຍ່ອມຫຼຸດພົ້ນຈາກກາມາສະວະ ພະວາສະວະ ແລະອະວິດຊາສະວະ ເມື່ອຈິດຫຼຸດພົ້ນແລ້ວກໍຮູ້ວ່າ "ຫຼຸດພົ້ນແລ້ວ" ຮູ້ຊັດແຈ້ງວ່າ "ຊາດສິ້ນແລ້ວ ຢູ່ຈົບພົມມະຈັນແລ້ວ ເຮັດກິດທີ່ຄວນເຮັດສຳເລັດແລ້ວ ບໍ່ມີກິດອື່ນເພື່ອຄວາມເປັນແນວນີ້ອີກຕໍ່ໄປ"

ບຸກຄົນຜູ້ບໍ່ເຮັດຕົນໃຫ້ເດືອດຮ້ອນ ບໍ່ໝັ່ນປະກອບໃນການເຮັດຕົນໃຫ້ເດືອດຮ້ອນ ແລະບໍ່ເຮັດຜູ້ອື່ນໃຫ້ເດືອດຮ້ອນບໍ່ໝັ່ນປະກອບໃນການເຮັດຜູ້ອື່ນໃຫ້ເດືອດຮ້ອນ ເປັນແນວນີ້ ເຂົາບໍ່ເຮັດຕົນໃຫ້ເດືອດຮ້ອນ ບໍ່ເຮັດຜູ້ອື່ນໃຫ້ເດືອດຮ້ອນ ບໍ່ໝັ່ນປະກອບໃນການເຮັດຜູ້ອື່ນໃຫ້ເດືອດຮ້ອນ ເປັນຜູ້ບໍ່ຫິວດັບຮ້ອນ ເຢັນໃຈ ສະເຫວີຍສຸກ ມີຕົນປະເສີດຢູ່ໃນປັດຈຸບັນ

[໑໗໖] ບຸກຄົນຜູ້ມີຣາຄະ ເປັນແນວໃດ?

ບຸກຄົນຜູ້ຍັງລະຣາຄະບໍ່ໄດ້ ບຸກຄົນນີ້ຮຽກວ່າ ຜູ້ມີຣາຄະ

ບຸກຄົນຜູ້ມີໂທສະ ເປັນແນວໃດ?

ບຸກຄົນຜູ້ຍັງລະໂທສະບໍ່ໄດ້ ບຸກຄົນນີ້ຮຽກວ່າ ຜູ້ມີໂທສະ

ບຸກຄົນຜູ້ມີໂມຫະ ເປັນແນວໃດ?

ບຸກຄົນຜູ້ຍັງລະໂມຫະບໍ່ໄດ້ ບຸກຄົນນີ້ຮຽກວ່າ ຜູ້ມີໂມຫະ

ບຸກຄົນຜູ້ມີມານະ ເປັນແນວໃດ?

ບຸກຄົນຜູ້ຍັງລະມານະບໍ່ໄດ້ ບຸກຄົນນີ້ຮຽກວ່າ ຜູ້ມີມານະ

[໑໗໗] ບຸກຄົນຜູ້ໄດ້ຄວາມສະງົບແຫ່ງຈິດພາຍໃນ ແຕ່ບໍ່ໄດ້ຄວາມເຫັນແຈ້ງທຳດ້ວຍປັນຍາອັນຍິ່ງ ເປັນແນວໃດ?

ບຸກຄົນບາງຄົນໃນໂລກນີ້ໄດ້ສະມາບັດມີຮູບເປັນອາລົມ ຫຼື ມີອະຮູບເປັນອາລົມແຕ່ບໍ່ໄດ້ໂລກຸດຕະຣະມັກ ຫຼື ໂລກຸດຕະຣະຜົນ ບຸກຄົນເຊັ່ນນີ້ຊື່ວ່າຜູ້ໄດ້ຄວາມສະງົບແຫ່ງຈິດພາຍໃນແຕ່ບໍ່ໄດ້ຄວາມເຫັນແຈ້ງທຳດ້ວຍປັນຍາອັນຍິ່ງ

ບຸກຄົນຜູ້ໄດ້ຄວາມເຫັນແຈ້ງທຳດ້ວຍປັນຍາອັນຍິ່ງ ແຕ່ບໍ່ໄດ້ຄວາມສະງົບແຫ່ງຈິດພາຍໃນ ເປັນແນວໃດ?

ບຸກຄົນບາງຄົນໃນໂລກນີ້ໄດ້ໂລກຸດຕະຣະມັກ ຫຼື ໂລກຸດຕະຣະຜົນ ແຕ່ບໍ່ໄດ້ສະມາບັດມີຮູບເປັນອາລົມຫຼືມີອະຮູບເປັນອາລົມ ບຸກຄົນເຊັ່ນນີ້ຊື່ວ່າ ຜູ້ໄດ້ຄວາມເຫັນແຈ້ງທຳດ້ວຍປັນຍາອັນຍິ່ງ ແຕ່ບໍ່ໄດ້ຄວາມສະງົບແຫ່ງຈິດພາຍໃນ

ບຸກຄົນຜູ້ໄດ້ຄວາມສະງົບແຫ່ງຈິດພາຍໃນ ແລະໄດ້ຄວາມເຫັນແຈ້ງທຳດ້ວຍປັນຍາອັນຍິ່ງ ເປັນແນວໃດ?

ບຸກຄົນບາງຄົນໃນໂລກນີ້ໄດ້ສະມາບັດມີຮູບເປັນອາລົມຫຼືມີອະຮູບເປັນອາລົມ ໄດ້ໂລກຸດຕະຣະມັກຫຼືໂລກຸດຕະຣະຜົນ ບຸກຄົນເຊັ່ນນີ້ຊື່ວ່າຜູ້ໄດ້ຄວາມສະງົບແຫ່ງຈິດພາຍໃນແລະໄດ້ຄວາມເຫັນແຈ້ງທຳດ້ວຍປັນຍາອັນຍິ່ງ

ບຸກຄົນຜູ້ບໍ່ໄດ້ຄວາມສະງົບແຫ່ງຈິດພາຍໃນ ແລະບໍ່ໄດ້ຄວາມເຫັນແຈ້ງທຳດ້ວຍປັນຍາອັນຍິ່ງ ເປັນແນວໃດ?

ບຸກຄົນບາງຄົນໃນໂລກນີ້ບໍ່ໄດ້ສະມາບັດມີຮູບເປັນອາລົມຫຼືມີອະຮູບເປັນອາລົມ ບໍ່ໄດ້ໂລກຸດຕະຣະມັກຫຼືໂລກຸດຕະຣະຜົນ ບຸກຄົນເຊັ່ນນີ້ຊື່ວ່າຜູ້ບໍ່ໄດ້ຄວາມສະງົບແຫ່ງຈິດພາຍໃນແລະບໍ່ໄດ້ຄວາມເຫັນແຈ້ງທຳດ້ວຍປັນຍາອັນຍິ່ງ

[໑໗໘] ບຸກຄົນຜູ້ໄປຕາມກະແສ ເປັນແນວໃດ?

ບຸກຄົນບາງຄົນໃນໂລກນີ້ເສບກາມແລະເຮັດບາບກຳ ບຸກຄົນນີ້ຮຽກວ່າ ຜູ້ໄປຕາມກະແສ

ບຸກຄົນຜູ້ໄປທວນກະແສ ເປັນແນວໃດ?

ບຸກຄົນບາງຄົນໃນໂລກນີ້ບໍ່ເສບກາມແລະບໍ່ເຮັດບາບກຳ ເຖິງຈະມີທຸກ ໂທມະນັດ ຮ້ອງໄຫ້ນ້ຳຕານອງໜ້າ ແຕ່ກໍຍັງປະພຶດພົມມະຈັນໃຫ້ບໍລິສຸດ ບໍລິບູນໄດ້ ບຸກຄົນນີ້ຮຽກວ່າ ຜູ້ໄປທວນກະແສ

ບຸກຄົນຜູ້ມີພາວະຕັ້ງໝັ້ນ ເປັນແນວໃດ?

ບຸກຄົນບາງຄົນໃນໂລກນີ້ ຍ້ອນສັງໂຍດເບື້ອງຕ່ຳທັງ ໕ ປະການສິ້ນໄປ ເປັນໂອປະປາຕິກະ ປະຣິນິບພານໃນພົບນັ້ນ ບໍ່ກັບມາຈາກພົບນັ້ນເປັນທຳມະດາ ບຸກຄົນນີ້ຮຽກວ່າ ຜູ້ມີພາວະຕັ້ງໝັ້ນ

ບຸກຄົນຜູ້ລອຍບາບຂ້າມຮອດຝັ່ງດຳຣົງຢູ່ເທິງບົກ ເປັນແນວໃດ?

ບຸກຄົນບາງຄົນໃນໂລກນີ້ເຮັດໃຫ້ແຈ້ງເຈໂຕວິມຸດຕິປັນຍາວິມຸດຕິ ອັນບໍ່ມີອາສະວະຍ້ອນອາສະວະທັງຫຼາຍສິ້ນໄປດ້ວຍປັນຍາອັນຍິ່ງເອງຢູ່ ບຸກຄົນນີ້ຮຽກວ່າ ຜູ້ລອຍບາບຂ້າມຮອດຝັ່ງດຳຣົງຢູ່ເທິງບົກ

[໑໗໙] ບຸກຄົນຜູ້ມີສຸຕະໜ້ອຍ ທັງບໍ່ເຂົ້າເຖິງສຸຕະ ເປັນແນວໃດ?

ບຸກຄົນບາງຄົນໃນໂລກນີ້ມີສຸຕະ ເຄີຍຍະ ເວີຍຍາກະຣະນະ ຄາຖາ ອຸທານ ອິຕິວຸດຕະກະ ຊາຕະກະ ອັບພູຕະທຳ ເວທັນລະໜ້ອຍ ແຕ່ເຂົາບໍ່ຮູ້ອັດຖະຮູ້ທຳແຫ່ງສຸຕະໜ້ອຍນັ້ນແລ້ວປະຕິບັດທຳສົມຄວນແກ່ທຳເລີຍ ບຸກຄົນຜູ້ມີສຸຕະໜ້ອຍ ທັງບໍ່ເຂົ້າເຖິງສຸຕະ ເປັນແນວນີ້

ບຸກຄົນຜູ້ມີສຸຕະໜ້ອຍ ແຕ່ເຂົ້າເຖິງສຸຕະ ເປັນແນວໃດ?

ບຸກຄົນບາງຄົນໃນໂລກນີ້ມີສຸຕະ ເຄີຍຍະ ເວີຍຍາກະຣະນະ ຄາຖາ ອຸທານ ອິຕິວຸດຕະກະ ຊາຕະກະ ອັບພູຕະທຳ ເວທັນລະໜ້ອຍ ແຕ່ເຂົາຮູ້ອັດຖະຮູ້ທຳແຫ່ງສຸຕະໜ້ອຍນັ້ນປະຕິບັດທຳສົມຄວນແກ່ທຳ ບຸກຄົນຜູ້ມີສຸຕະໜ້ອຍແຕ່ເຂົ້າເຖິງສຸຕະເປັນແນວນີ້

ບຸກຄົນຜູ້ມີສຸຕະຫຼາຍແຕ່ບໍ່ເຂົ້າເຖິງສຸຕະ ເປັນແນວໃດ?

ບຸກຄົນບາງຄົນໃນໂລກນີ້ມີສຸຕະ ເຄີຍຍະ ເວີຍຍາກະຣະນະ ຄາຖາ ອຸທານ ອິຕິວຸດຕະກະ ຊາຕະກະ ອັບພູຕະທຳ ເວທັນລະຫຼາຍ ແຕ່ເຂົາບໍ່ຮູ້ອັດຖະບໍ່ຮູ້ທຳແຫ່ງສຸຕະຫຼາຍນັ້ນແລ້ວປະຕິບັດທຳສົມຄວນແກ່ທຳເລີຍ ບຸກຄົນຜູ້ມີສຸຕະຫຼາຍແຕ່ບໍ່ເຂົ້າເຖິງສຸຕະ ເປັນແນວນີ້

ບຸກຄົນຜູ້ມີສຸຕະຫຼາຍທັງເຂົ້າເຖິງສຸຕະ ເປັນແນວໃດ?

ບຸກຄົນບາງຄົນໃນໂລກນີ້ມີສຸຕະ ເຄີຍຍະ ເວີຍຍາກະຣະນະ ຄາຖາ ອຸທານ ອິຕິວຸດຕະກະ ຊາຕະກະ ອັບພູຕະທຳ ເວທັນລະຫຼາຍ ທັງເຂົາກໍຮູ້ອັດຖະຮູ້ທຳແຫ່ງສຸຕະຫຼາຍນັ້ນປະຕິບັດທຳສົມຄວນແກ່ທຳ ບຸກຄົນຜູ້ມີສຸຕະຫຼາຍ ທັງເຂົ້າເຖິງສຸຕະ ເປັນແນວນີ້

[໑໘໐] ບຸກຄົນຜູ້ເປັນສະມະນະບໍ່ຫວັ່ນໄຫວ ເປັນແນວໃດ?

ບຸກຄົນບາງຄົນໃນໂລກນີ້ ຍ້ອນສັງໂຍດ ໓ ປະການສິ້ນໄປ ເປັນໂສດາບັນ ບໍ່ມີທາງຕົກຕ່ຳ ມີຄວາມແນ່ນອນທີ່ຈະສຳເລັດສຳໂພທິໃນວັນຂ້າງໜ້າ ບຸກຄົນນີ້ຮຽກວ່າ ຜູ້ເປັນສະມະນະບໍ່ຫວັ່ນໄຫວ

ບຸກຄົນຜູ້ເປັນສະມະນະເໝືອນດອກບຸນທະຣິກ ເປັນແນວໃດ?

ບຸກຄົນບາງຄົນໃນໂລກນີ້ ຍ້ອນສັງໂຍດ ໓ ປະການສິ້ນໄປ ແລະຍ້ອນຣາຄະໂທສະ ໂມຫະເບົາບາງ ເປັນສະກະທາຄາມີ ມາສູ່ໂລກນີ້ອີກພຽງເທື່ອດຽວເທົ່ານັ້ນກໍຈະທຳບ່ອນສຸດແຫ່ງທຸກໄດ້ ບຸກຄົນນີ້ຮຽກວ່າ ຜູ້ເປັນສະມະນະເໝືອນດອກບຸນທະຣິກ

ບຸກຄົນຜູ້ເປັນສະມະນະເໝືອນດອກປະທຸມ ເປັນແນວໃດ?

ບຸກຄົນບາງຄົນໃນໂລກນີ້ ຍ້ອນສັງໂຍດເບື້ອງຕ່ຳທັງ ໕ ປະການສິ້ນໄປ ເປັນໂອປະປາຕິກະ ປະຣິນິບພານໃນໂລກນັ້ນ ບໍ່ກັບມາຈາກພົບນັ້ນເປັນທຳມະດາ ບຸກຄົນນີ້ຮຽກວ່າ ຜູ້ເປັນສະມະນະເໝືອນດອກປະທຸມ

ບຸກຄົນຜູ້ເປັນສະມະນະຜູ້ລະອຽດອ່ອນໃນໝູ່ສະມະນະ ເປັນແນວໃດ?

ບຸກຄົນບາງຄົນໃນໂລກນີ້ເຮັດໃຫ້ແຈ້ງເຈໂຕວິມຸດຕິ ປັນຍາວິມຸດຕິອັນບໍ່ມີອາສະວະ ຍ້ອນອາສະວະ ທັງຫຼາຍສິ້ນໄປດ້ວຍປັນຍາອັນຍິ່ງເອງເຂົ້າເຖິງຢູ່ໃນປັດຈຸບັນ ບຸກຄົນນີ້ຮຽກວ່າ ຜູ້ເປັນສະມະນະຜູ້ລະອຽດອ່ອນໃນໝູ່ສະມະນະ

**ຈະຕຸກກະນິດເທດ ຈົບ**

# ໕. ປັນຈະກະປຸກຄະລະບັນຍັດ

[໑໙໑] ບັນດາບຸກຄົນທີ່ສະແດງແລ້ວເຫຼົ່ານັ້ນ ບຸກຄົນຜູ້ຕ້ອງອາບັດແລະເດືອດຮ້ອນ ທັງບໍ່ຮູ້ຊັດແຈ້ງຕາມຄວາມເປັນຈິງ ເຊິ່ງເຈໂຕວິມຸດຕິ ປັນຍາວິມຸດຕິອັນເປັນທີ່ດັບໄປໂດຍບໍ່ເຫຼືອແຫ່ງສະພາວະທຳທີ່ເປັນອະກຸສົນ ເຊິ່ງເປັນບາບອັນເກີດຂຶ້ນແລ້ວແກ່ຕົນ ບຸກຄົນນັ້ນເພິ່ງຖືກວ່າກ່າວແນວນີ້ວ່າ "ອາສະວະທີ່ເກີດຈາກການຕ້ອງອາບັດມີແກ່ທ່ານ ອາສະວະທີ່ເກີດຈາກຄວາມເດືອດຮ້ອນຈະເລີນແກ່ທ່ານ ດີແລ້ວ ທ່ານຈົ່ງລະອາສະວະທີ່ເກີດຈາກການຕ້ອງອາບັດ ບັນເທົາອາສະວະທີ່ເກີດຈາກຄວາມເດືອດຮ້ອນ ຈະເລີນຈິດແລະຈະເລີນປັນຍາ ເມື່ອຈະເລີນແນວນີ້ແລ້ວທ່ານຈັກເປັນຜູ້ສະເໝີດ້ວຍບຸກຄົນທີ ໕"

ບັນດາບຸກຄົນເຫຼົ່ານັ້ນ ບຸກຄົນຜູ້ຕ້ອງອາບັດແຕ່ບໍ່ເດືອດຮ້ອນ ທັງບໍ່ຮູ້ຊັດແຈ້ງຕາມຄວາມເປັນຈິງເຊິ່ງເຈໂຕວິມຸດຕິ ປັນຍາວິມຸດຕິ ອັນເປັນບ່ອນດັບໄປໂດຍບໍ່ເຫຼືອແຫ່ງສະພາວະທຳທີ່ເປັນອະກຸສົນ ເຊິ່ງເປັນບາບອັນເກີດຂຶ້ນແລ້ວແກ່ຕົນ ບຸກຄົນນັ້ນເພິ່ງຖືກວ່າກ່າວແນວນີ້ວ່າ "ອາສະວະທີ່ເກີດຈາກການຕ້ອງອາບັດມີແກ່ທ່ານ ອາສະວະທີ່ເກີດຈາກຄວາມເດືອດຮ້ອນຍ່ອມບໍ່ຈະເລີນແກ່ທ່ານ ດີແລ້ວ ທ່ານຈົ່ງລະອາສະວະທີ່ເກີດຈາກການຕ້ອງອາບັດແລ້ວ ຈະເລີນຈິດແລະປັນຍາ ເມື່ອຈະເລີນແນວນີ້ແລ້ວ ທ່ານຈັກເປັນຜູ້ສະເໝີດ້ວຍບຸກຄົນທີ ໕"

ບັນດາບຸກຄົນເຫຼົ່ານັ້ນ ບຸກຄົນຜູ້ບໍ່ຕ້ອງອາບັດແຕ່ເດືອດຮ້ອນແລະບໍ່ຮູ້ຊັດແຈ້ງຕາມຄວາມເປັນຈິງ ເຊິ່ງເຈໂຕວິມຸດຕິ ປັນຍາວິມຸດຕິອັນເປັນບ່ອນດັບໄປໂດຍບໍ່ເຫຼືອແຫ່ງສະພາວະທຳທີ່ເປັນອະກຸສົນເຊິ່ງເປັນບາບອັນເກີດຂຶ້ນແລ້ວແກ່ຕົນ ບຸກຄົນນັ້ນເພິ່ງຖືກວ່າກ່າວແນວນີ້ວ່າ "ອາສະວະທີ່ເກີດຈາກການຕ້ອງອາບັດບໍ່ມີແກ່ທ່ານ ອາສະວະທີ່ເກີດຈາກຄວາມເດືອດຮ້ອນຈະເລີນແກ່ທ່ານ

ດີແລ້ວ ທ່ານຈຶ່ງລະອາສະວະທີ່ເກີດຈາກຄວາມເດືອດຮ້ອນແລ້ວຈະເລີນຈິດແລະປັນຍາ ເມື່ອຈະເລີນແລ້ວແນວນີ້ ທ່ານຈັກເປັນຜູ້ສະເໝີດ້ວຍບຸກຄົນທີ ໕"

ບັນດາບຸກຄົນເຫຼົ່ານັ້ນ ບຸກຄົນຜູ້ບໍ່ຕ້ອງອາບັດ ບໍ່ເດືອດຮ້ອນ ແລະບໍ່ຮູ້ຊັດແຈ້ງຕາມຄວາມເປັນຈິງເຊິ່ງເຈໂຕວິມຸດຕິ ປັນຍາວິມຸດຕິອັນເປັນທີ່ດັບໄປໂດຍບໍ່ເຫຼືອແຫ່ງສະພາວະທຳທີ່ເປັນອະກຸສົນເຊິ່ງເປັນບາບອັນເກີດຂຶ້ນແລ້ວແກ່ຕົນ ບຸກຄົນນັ້ນເພິ່ງຖືກວ່າກ່າວແນວນີ້ວ່າ

ອາສະວະທີ່ເກີດຈາກການຕ້ອງອາບັດບໍ່ມີແກ່ທ່ານ ອາສະວະທີ່ເກີດຈາກຄວາມເດືອດຮ້ອນບໍ່ຈະເລີນແກ່ທ່ານ ດີແລ້ວ ທ່ານຈົ່ງຈະເລີນຈິດແລະປັນຍາ ເມື່ອຈະເລີນແນວນີ້ແລ້ວ ທ່ານຈັກເປັນຜູ້ສະເໝີດ້ວຍບຸກຄົນທີ ໕"

ບຸກຄົນ ໔ ຈຳພວກເຫຼົ່ານີ້ ເມື່ອບຸກຄົນທີ ໕ ໂອວາດພ່ຳສອນຢູ່ແນວນີ້ ຈະເຖິງຄວາມສິ້ນອາສະວະໂດຍລຳດັບ

[໑໒໘] ບຸກຄົນໃຫ້ແລ້ວດູໝິ່ນ ເປັນແນວໃດ?

ບຸກຄົນບາງຄົນໃນໂລກນີ້ໃຫ້ຈີວອນ ບິນທະບາດ ເສນາສະນະ ແລະຄິລານະປັດໄຈເພສັດ ບໍຣິຂານແກ່ບຸກຄົນໃດ ບຸກຄົນນັ້ນກັບມີຄວາມຄິດແນວນີ້ວ່າ "ເຮົາຈະໃຫ້ ຜູ້ນີ້ຈະຮັບ" ໃຫ້ແລ້ວຍ່ອມດູໝິ່ນຜູ້ນັ້ນ ບຸກຄົນເຊັ່ນນີ້ຊື່ວ່າໃຫ້ແລ້ວດູໝິ່ນ

ບຸກຄົນດູໝິ່ນດ້ວຍການຢູ່ຮ່ວມກັນ ເປັນແນວໃດ?

ບຸກຄົນບາງຄົນໃນໂລກນີ້ຢູ່ຮ່ວມກັບບຸກຄົນໃດຕະຫຼອດ ໒ ຫຼື ໓ ປີ ດູໝິ່ນບຸກຄົນນັ້ນຍ້ອນການຢູ່ຮ່ວມກັນ ບຸກຄົນເຊັ່ນນີ້ຊື່ວ່າດູໝິ່ນດ້ວຍການຢູ່ຮ່ວມກັນ

ບຸກຄົນຜູ້ເຊື່ອງ່າຍ ເປັນແນວໃດ?

ບຸກຄົນບາງຄົນໃນໂລກນີ້ ເມື່ອເຂົາກ່າວສັນເສີນ ຫຼື ກ່າວຕິຕຽນຜູ້ອື່ນກໍເຊື່ອທັນທີບຸກຄົນເຊັ່ນນີ້ຊື່ວ່າຜູ້ເຊື່ອງ່າຍ

ບຸກຄົນຜູ້ໂລເລ ເປັນແນວໃດ?

ບຸກຄົນບາງຄົນໃນໂລກນີ້ມີສັດທາໜ້ອຍ ມີຄວາມພັກດີໜ້ອຍ ມີຄວາມຮັກໜ້ອຍມີຄວາມເຫຼື້ອມໃສໜ້ອຍ ບຸກຄົນເຊັ່ນນີ້ຊື່ວ່າຜູ້ໂລເລ

ບຸກຄົນຜູ້ໂງ່ງົມງວາຍ ເປັນແນວໃດ?

ບຸກຄົນບາງຄົນໃນໂລກນີ້ບໍ່ຮູ້ສະພາວະທຳທັງທີ່ເປັນກຸສົນ ແລະອະກຸສົນ ມີໂທດແລະບໍ່ມີໂທດ ທີ່ຊົ່ວແລະປະນີດ ມີສ່ວນປຽບດ້ວຍທຳຝ່າຍດຳ ແລະທຳຝ່າຍຂາວ ບຸກຄົນເຊັ່ນນີ້ຊື່ວ່າຜູ້ໂງ່ງົມງວາຍ

[໑໘໓] ໃນບົດມາຕິການັ້ນ ບຸກຄົນປຽບເໝືອນນັກຮົບອາຊີບ ໕ ຈຳພວກ ເປັນແນວໃດ?

ນັກຮົບອາຊີບ ໕ ຈຳພວກ ຄື

ນັກຮົບບາງຄົນໃນໂລກນີ້ພໍແຕ່ເຫັນກຸ່ມຄວັນເທົ່ານັ້ນ ຍ່ອມຊະງັກຢຸດຢູ່ ບໍ່ຕັ້ງໝັ້ນ ບໍ່ສາມາດເຂົ້າສູ່ສົງຄາມໄດ້ ນັກຮົບບາງຄົນແມ່ນເຊັ່ນນີ້ກໍຊື່ວ່າເປັນນັກຮົບອາຊີບ ນັກຮົບອາຊີບຈຳພວກທີ ໑ ນີ້ມີຜາກົດຢູ່ໃນໂລກ

ຍັງມີອີກ ນັກຮົບອາຊີບບາງຄົນໃນໂລກນີ້ແມ່ນເຫັນກຸ່ມຄວັນກໍອົດທົນໄດ້ ແຕ່ວ່າເຫັນປາຍທຸງແລ້ວຍ່ອມຊະງັກ ຢຸດ ບໍ່ຕັ້ງໝັ້ນ ບໍ່ສາມາດຈະເຂົ້າສູ່ສົງຄາມໄດ້ ນັກຮົບບາງຄົນແມ່ນເຊັ່ນນີ້ກໍຊື່ວ່າເປັນນັກຮົບອາຊີບ ນັກຮົບອາຊີບຈຳພວກທີ ໒ ນີ້ມີຜາກົດຢູ່ໃນໂລກ

ຍັງມີອີກ ນັກຮົບອາຊີບບາງຄົນໃນໂລກນີ້ແມ່ນເຫັນກຸ່ມຄວັນກໍອົດທົນໄດ້ ເຫັນປາຍທຸງກໍອົດທົນໄດ້ ແຕ່ພໍໄດ້ຍິນສຽງອຶກກະທຶກແລ້ວຍ່ອມຊະງັກຢຸດ ບໍ່ຕັ້ງໝັ້ນ ບໍ່ສາມາດຈະເຂົ້າສູ່ສົງຄາມໄດ້ ນັກຮົບບາງຄົນແມ່ນເຊັ່ນນີ້ກໍຊື່ວ່າ ເປັນນັກຮົບອາຊີບ ນັກຮົບອາຊີບຈຳພວກທີ ໓ ນີ້ມີຜາກົດຢູ່ໃນໂລກ

ຍັງມີອີກ ນັກຮົບອາຊີບບາງຄົນໃນໂລກນີ້ແມ່ນເຫັນກຸ່ມຄວັນກໍອົດທົນໄດ້ ເຫັນປາຍທຸງກໍອົດທົນໄດ້ ໄດ້ຍິນສຽງອຶກກະທຶກກໍອົດທົນໄດ້ ແຕ່ພໍປະທະຕໍ່ສູ້ກັນຍ່ອມອິດເມື່ອຍຣະສ່ຳຣະສາຍຢ້ານ ນັກຮົບບາງຄົນແມ່ນເຊັ່ນນີ້ກໍຊື່ວ່າເປັນນັກຮົບອາຊີບ ນັກຮົບອາຊີບຈຳພວກທີ ໔ ນີ້ມີຜາກົດຢູ່ໃນໂລກ

ຍັງມີອີກ ນັກຮົບອາຊີບບາງຄົນໃນໂລກນີ້ແມ່ນເຫັນກຸ່ມຄວັນກໍອົດທົນໄດ້ ເຫັນປາຍທຸງກໍອົດທົນໄດ້ ໄດ້ຍິນສຽງອຶກກະທຶກກໍອົດທົນໄດ້ ປະທະກັນກໍອົດທົນໄດ້ ນັກຮົບອາຊີບນັ້ນຊະນະສົງຄາມນັ້ນແລ້ວຊື່ວ່າ ຜູ້ພິຊິດສົງຄາມ ຍ່ອມຄອບຄອງຄ້າຍທີ່ຊະນະມາໄວ້ໄດ້ ນັກຮົບບາງຄົນແມ່ນເຊັ່ນນີ້ກໍຊື່ວ່າເປັນນັກຮົບອາຊີບ ນັກຮົບອາຊີບຈຳພວກທີ ໕ ນີ້ມີຜາກົດຢູ່ໃນໂລກ

ນັກຮົບອາຊີບ ໕ ຈຳພວກເຫຼົ່ານີ້ມີຜາກົດຢູ່ໃນໂລກ

[໑໘໔] ບຸກຄົນປຽບເໝືອນນັກຮົບອາຊີບ ໕ ຈຳພວກເຫຼົ່ານີ້ມີຜາກົດຢູ່ໃນພິກຂຸທັງຫຼາຍແນວນີ້ຄືກັນ

ພິກຂຸ ໕ ຈຳພວກ ເປັນແນວໃດ?

ພິກຂຸບາງອົງໃນທຳວິໄນນີ້ເຫັນກຸ່ມທຸລີເທົ່ານັ້ນ ຍ່ອມຊົບເຊົາ ທາງອຍເຫງົາ ບໍ່ຕັ້ງໝັ້ນຍ່ອມບໍ່ສາມາດຈະສືບຕໍ່ພົມມະຈັນ ປະກາດຄວາມທຍໍ້ທຍ່ອນໃນສິກຂາ ບອກຄືນສິກຂາວຽນມາເປັນຄະລິຫັດ ອັນໃດເປັນກຸ່ມທຸລີຂອງພິກຂຸນັ້ນ ພິກຂຸໃນທຳວິໄນນີ້ໄດ້ຮູ້ຂ່າວວ່າ “ໃນບ້ານຫຼືນິຄົມຊື່ນັ້ນ ມີແມ່ຍິງ ຫຼື ກຸມາຣີ ຜູ້ມີຮູບງາມ ໜ້າເບິ່ງ ໜ້າຊື່ນຊົມ ມີຜິວພັນງາມຍິ່ງ” ທ່ານໄດ້ຮູ້ຂ່າວ

ນັ້ນແລ້ວ ຍ່ອມຊົບເຊົາ ທ້ອຍເທ້ີາ ບໍ່ຕັ້ງໝັ້ນ ບໍ່ສາມາດເພື່ອຈະສືບຕໍ່ພົມມະຈັນໄດ້ ປະກາດຄວາມທໍ້ທ່ອນໃນສິກຂາ ບອກຄືນ ສິກຂາວຽນມາເປັນຄະລິຫັດ ນີ້ຊື່ວ່າກຸ່ມທຸລີຂອງພິກຂຸນັ້ນ

ນັກຮົບອາຊີບນັ້ນພໍເຫັນກຸ່ມຄວັນເທົ່ານັ້ນຍ່ອມຊະງັກ ຢຸດຢູ່ ບໍ່ຕັ້ງໝັ້ນ ບໍ່ສາມາດຈະເຂົ້າສູ່ສົງຄາມໄດ້ແມ່ນສັນໃດ ພິກຂຸນີ້ກໍອຸປະມາສັນນັ້ນ ບຸກຄົນບາງຄົນໃນໂລກນີ້ເປັນເຊັ່ນນີ້ ບຸກຄົນປຽບເໝືອນນັກຮົບອາຊີບຈຳພວກທີ ໑ ນີ້ມີຜາກົດຢູ່ໃນພິກຂຸທັງຫຼາຍ

[໑໗໕] ຍັງມີອີກ ພິກຂຸບາງອົງໃນທຳວິໄນນີ້ເຫັນກຸ່ມທຸລີກໍອົດທົນໄດ້ ແຕ່ພໍເຫັນປາຍທຸງເທົ່ານັ້ນຍ່ອມຊົບເຊົາ ທ້ອຍເທ້ີາ ບໍ່ຕັ້ງໝັ້ນ ຍ່ອມບໍ່ສາມາດຈະສືບຕໍ່ພົມມະຈັນໄດ້ ປະກາດຄວາມທໍ້ທ່ອນໃນສິກຂາ ບອກຄືນສິກຂາວຽນມາເປັນຄະລິຫັດ ອັນໃດເປັນປາຍທຸງຂອງພິກຂຸນັ້ນ ພິກຂຸໃນທຳວິໄນນີ້ບໍ່ພຽງໄດ້ຍິນຂ່າວວ່າ "ໃນບ້ານ ຫຼື ນິຄົມ ຊື່ນັ້ນ ມີແມ່ຍິງຫຼືກຸມາຣີ ມີຮູບງາມ ໜ້າເບິ່ງ ໜ້າຊື່ນຊົມ ມີຜິວພັນງາມຍິ່ງ" ເມື່ອທ່ານເຫັນແລ້ວ ກໍປະກາດຄວາມທໍ້ທ່ອນໃນສິກຂາ ທ້ອຍເທ້ີາ ບໍ່ຕັ້ງໝັ້ນ ບໍ່ສາມາດຈະສືບຕໍ່ພົມມະຈັນ ປະກາດຄວາມທໍ້ທ່ອນໃນສິກຂາ ບອກຄືນສິກຂາວຽນມາເປັນຄະລິຫັດ ນີ້ຊື່ວ່າປາຍທຸງຂອງພິກຂຸນັ້ນ ນັກຮົບອາຊີບນັ້ນພໍເຫັນກຸ່ມຄວັນກໍອົດທົນໄດ້ ເຫັນປາຍທຸງຈຶ່ງຊະງັກ ຢຸດຢູ່ ບໍ່ຕັ້ງໝັ້ນ ບໍ່ສາມາດຈະເຂົ້າສູ່ສົງຄາມໄດ້ແມ່ນສັນໃດ ພິກຂຸນີ້ກໍອຸປະມາສັນນັ້ນ ບຸກຄົນບາງຄົນໃນໂລກນີ້ເປັນເຊັ່ນນີ້ປຽບເໝືອນນັກຮົບອາຊີບຈຳພວກທີ ໔ ນີ້ມີຜາກົດຢູ່ໃນພິກຂຸທັງຫຼາຍ

[໑໗໖] ຍັງມີອີກ ພິກຂຸບາງອົງໃນທຳວິໄນນີ້ເຫັນກຸ່ມທຸລີກໍອົດທົນໄດ້ ເຫັນປາຍທຸງກໍອົດທົນໄດ້ ແຕ່ພໍໄດ້ຍິນສຽງອຶກກະທຶກເທົ່ານັ້ນກໍຈົມຢູ່ໃນມິດສາວິຕົກ ຢຸດຢູ່ ບໍ່ຕັ້ງໝັ້ນ ບໍ່ສາມາດຈະສືບຕໍ່ພົມມະຈັນ ປະກາດຄວາມທໍ້ທ່ອນໃນສິກຂາ ບອກຄືນສິກຂາ ວຽນມາເປັນຄະລິຫັດ ອັນໃດເປັນສຽງອຶກກະທຶກຂອງພິກຂຸນັ້ນ ມາຕຸຄາມ ເຂົ້າໄປຫາພິກຂຸໃນທຳວິໄນນີ້ຜູ້ຢູ່ປ່າ ຢູ່ເຫ້ົາໄມ້ ຫຼື ຢູ່ເຮືອນວ່າງ ຍ່ອມຍິ້ມໃຫ້ ທັກທາຍ ຢອກຫຼິ້ນ ເວົ້າລໍ້ລຽນ ທ່ານຖືກມາຕຸຄາມຍິ້ມໃຫ້ ທັກທາຍ ຢອກຫຼິ້ນ ລໍ້ລຽນ ຍ່ອມຈົມຢູ່ໃນມິດສາວິຕົກ ຢຸດຢູ່ ບໍ່ຕັ້ງໝັ້ນ ບໍ່ສາມາດຈະສືບຕໍ່ພົມມະຈັນໄດ້ ປະກາດຄວາມທໍ້ທ່ອນໃນສິກຂາ ບອກຄືນສິກຂາວຽນມາເປັນຄະລິຫັດ ນີ້ຊື່ວ່າສຽງອຶກກະທຶກຂອງພິກຂຸນັ້ນ

ນັກຮົບອາຊີບນັ້ນເຫັນກຸ່ມທຸລີກໍອົດທົນໄດ້ ເຫັນປາຍທຸງກໍອົດທົນໄດ້ ແຕ່ພໍໄດ້ຍິນສຽງອຶກກະທຶກເທົ່ານັ້ນ ຍ່ອມຊະງັກ ຢຸດຢູ່ ບໍ່ຕັ້ງໝັ້ນ ບໍ່ສາມາດຈະເຂົ້າສູ່ສົງຄາມໄດ້ ແມ່ນສັນໃດ ພິກຂຸນີ້ກໍອຸປະມາສັນນັ້ນ ບຸກຄົນບາງຄົນໃນໂລກນີ້ເປັນເຊັ່ນນີ້ ບຸກຄົນປຽບເໝືອນນັກຮົບອາຊີບຈຳພວກທີ ໓ ນີ້ມີຜາກົດຢູ່ໃນພິກຂຸທັງຫຼາຍ

[໑໗໗] ຍັງມີອີກ ພິກຂຸບາງອົງໃນທຳວິໄນນີ້ເຫັນກຸ່ມທຸລີກໍອົດທົນໄດ້ ເຫັນປາຍທຸງກໍອົດທົນໄດ້ ໄດ້ຍິນສຽງອຶກກະທຶກກໍອົດທົນໄດ້ ແຕ່ເມື່ອປະທະກັນກໍອິດເມື່ອຍ ຣະສໍ່າຣະສາຍ ອັນໃດ

ເປັນການປະທະກັນຂອງພິກຂຸນັ້ນ ຄື ມາຕຸຄາມເຂົ້າໄປຫາພິກຂຸໃນທຳວິໄນນີ້ຜູ້ຢູ່ປ່າ ຢູ່ເຫງົ້າໄມ້ ຫຼື ຢູ່ເຮືອນວ່າງ ຍ່ອມນັ່ງໃກ້ຊິດ ນອນໃກ້ຊິດ ກອດຮັດ ທ່ານຖືກມາຕຸຄາມນັ່ງໃກ້ຊິດ ນອນໃກ້ຊິດ ກອດຮັດຢູ່ກໍບໍ່ບອກຄືນສິກຂາ ບໍ່ປະກາດ ຄວາມທໍ້ທ້ອຍໃຫ້ຜາກົດ ເສບເມຖຸນທຳ ນີ້ຊື່ວ່າ ການປະທະກັນຂອງພິກຂຸນັ້ນ

ນັກຮົບອາຊີບນັ້ນເຫັນກຸ່ມຄວັນກໍອົດທົນໄດ້ ເຫັນປາຍທຸງກໍອົດທົນໄດ້ ໄດ້ຍິນສຽງອືກກະທຶກກໍອົດທົນໄດ້ ແຕ່ວ່າຍ່ອມອິດເມື່ອຍ ຣະສໍ່າຣະສາຍໃນເມື່ອມີການປະທະກັນ

ແມ່ນສັນໃດ ພິກຂຸນີ້ກໍອຸປະມາສັນນັ້ນ ບຸກຄົນບາງຄົນໃນໂລກນີ້ເປັນເຊັ່ນນີ້ ບຸກຄົນປຽບເໝືອນນັກຮົບອາຊີບຈຳພວກທີ ໔ ນີ້ມີຜາກົດຢູ່ໃນພິກຂຸທັງຫຼາຍ

[໑໙໗] ຍັງມີອີກ ພິກຂຸບາງອົງໃນທຳວິໄນນີ້ເຫັນກຸ່ມທຸລີກໍອົດທົນໄດ້ ເຫັນປາຍທຸງກໍອົດທົນໄດ້ ໄດ້ຍິນສຽງອືກກະທຶກກໍອົດທົນໄດ້ ປະທະກັນກໍອົດທົນໄດ້ ທ່ານຊະນະສົງຄາມແລ້ວຊື່ວ່າຜູ້ພິຊິດສົງຄາມ ຍ່ອມຄອບຄອງຄ້າຍຮົບທີ່ຊະນະມາໄວ້ໄດ້ ອັນໃດເປັນໄຊຊະນະໃນສົງຄາມຂອງພິກຂຸນັ້ນ ຄື ມາຕຸຄາມເຂົ້າໄປຫາພິກຂຸໃນທຳວິໄນນີ້ຜູ້ຢູ່ປ່າ ຢູ່ເຫງົ້າໄມ້ຫຼືຢູ່ເຮືອນວ່າງແລ້ວ ຍ່ອມນັ່ງໃກ້ຊິດ ນອນໃກ້ຊິດ ກອດຮັດ ທ່ານຖືກມາຕຸຄາມນັ່ງໃກ້ຊິດ ນອນໃກ້ຊິດ ກອດຮັດຢູ່ກໍປົດເປື້ອງເອົາຕົວລອດໄດ້ ຫຼີກໄປຕາມບ່ອນປາຖະໜາ

ພິກຂຸນັ້ນຍ່ອມເຂົ້າສູ່ເສນາສະນະອັນສະຫງັດ ເຊັ່ນ ປ່າ ເຫງົ້າໄມ້ ພູເຂົາ ຊ່ອມພູ ຖໍ້າ ປ່າຊ້າ ປ່າທຶບ ກາງແຈ້ງ ກອງເຟືອງ ທ່ານຢູ່ປ່າ ຢູ່ເຫງົ້າໄມ້ ຫຼື ຢູ່ເຮືອນວ່າງ ນັ່ງຄູ້ບັນລັງ ຕັ້ງກາຍໃຫ້ກົງດຳຣົງສະຕິໃຫ້ໝັ້ນ ທ່ານລະອະພິດຊາໃນໂລກ ມີໃຈປາສະຈາກອະພິດຊາ ຊຳຣະຈິດໃຫ້ມົດຈົດຈາກອະພິດຊາ ລະຄວາມມຸ້ງຮ້າຍຄືພະຍາບາດ ມີຈິດບໍ່ພະຍາບາດ ມຸ້ງປະໂຫຍດເກື້ອກູນແກ່ສັບພະສັດຢູ່ ຊຳຣະຈິດໃຫ້ມົດຈົດຈາກຄວາມມຸ້ງຮ້າຍຄືພະຍາບາດ ລະຖີນະມິດທະປາສະຈາກຖີນະມິດທະ ກຳນົດແສງສະຫວ່າງ ມີສະຕິສຳປະຊັນຍະ ຊຳຣະຈິດໃຫ້ມົດຈົດຈາກຖີນະມິດທະ ລະອຸດທັດຈະກຸກກຸດຈະ ເປັນຜູ້ບໍ່ຟຸ້ງຊ່ານ ມີຈິດສະງົບພາຍໃນ ຊຳຣະຈິດໃຫ້ມົດຈົດຈາກອຸດທັດຈະກຸກກຸດຈະ ລະວິຈິກິດສາ ຂ້າມພົ້ນວິຈິກິດສາໄດ້ແລ້ວ ບໍ່ມີຄວາມສົງໄສໃນກຸສົນທຳທັງຫຼາຍຢູ່ ຊຳຣະຈິດໃຫ້ມົດຈົດຈາກວິຈິກິດສາ

ພິກຂຸນັ້ນລະນິວອນ ໕ ປະການເຫຼົ່ານີ້ ທີ່ເຮັດໃຫ້ຈິດເສົ້າໝອງ ບັ່ນທອນກຳລັງປັນຍາ ສະຫງັດຈາກກາມ ສະຫງັດຈາກສະພາວະທຳທີ່ເປັນອະກຸສົນ ບັນລຸປະຖົມຊານທີ່ມີວິຕົກ ມີວິຈານ ມີປີຕິ ແລະສຸກອັນເກີດຈາກວິເວກຢູ່ ຍ້ອນວິຕົກວິຈານສະງົບຣະງັບໄປ ບັນລຸທຸຕິຍະຊານ ຯລຯ ບັນລຸຕະຕິຍະຊານ ຯລຯ ບັນລຸຈະຕຸດຖະຊານ ຯລຯ ຢູ່

ພິກຂຸນັ້ນ ເມື່ອຈິດເປັນສະມາທິ ບໍລິສຸດ ຜຸດຜ່ອງ ບໍ່ມີກິເລດພຽງດັ່ງເນີນ ປາສະຈາກຄວາມເສົ້າໝອງ ອ່ອນ ເໝາະແກ່ການໃຊ້ງານ ຕັ້ງໝັ້ນ ບໍ່ຫວັ່ນແນວນີ້ ນ້ອມຈິດໄປເພື່ອອາສະ

ວັກຂະຍະຍານ ທ່ານຍ່ອມຮູ້ຊັດແຈ້ງຕາມຄວາມເປັນຈິງວ່າ "ນີ້ທຸກ ນີ້ເຫດເກີດແຫ່ງທຸກ ນີ້ຄວາມດັບທຸກ ນີ້ຂໍ້ປະຕິບັດໃຫ້ເຖິງຄວາມດັບທຸກ ນີ້ອາສະວະ ນີ້ເຫດເກີດແຫ່ງອາສະວະ ນີ້ຄວາມດັບອາສະວະ ນີ້ຂໍ້ປະຕິບັດໃຫ້ເຖິງຄວາມດັບອາສະວະ"

ເມື່ອທ່ານຮູ້ເຫັນຢູ່ແນວນີ້ ຈິດຍ່ອມຫຼຸດພົ້ນຈາກກາມາສະວະ ພະວາສະວະ ແລະອະວິດຊາສະວະ ເມື່ອຈິດຫຼຸດພົ້ນແລ້ວ ກໍຮູ້ວ່າ "ຫຼຸດພົ້ນແລ້ວ" ຮູ້ຊັດແຈ້ງວ່າ "ຊາດສິ້ນແລ້ວ ຢູ່ຈົບພົມຈັນແລ້ວ ເຮັດກິດທີ່ຄວນເຮັດສຳເລັດແລ້ວ ບໍ່ມີກິດອື່ນເພື່ອຄວາມເປັນແນວນີ້ອີກຕໍ່ໄປ" ນີ້ຄືການໄດ້ໄຊຊະນະໃນສົງຄາມຂອງພິກຂຸນັ້ນ ນັກຮົບອາຊີບນັ້ນເຫັນກຸ່ມຄວັນແລ້ວກໍອົດທົນໄດ້ ເຫັນປາຍທຸງກໍອົດທົນໄດ້ ໄດ້ຍິນສຽງອຶກກະທຶກກໍອົດທົນໄດ້ ປະທະກັນກໍອົດທົນໄດ້ ນັກຮົບອາຊີບນັ້ນ ຊະນະສົງຄາມນັ້ນແລ້ວ ເປັນຜູ້ພິຊິດສົງຄາມ ຍ່ອມຄອບຄອງຄ້າຍຮົບທີ່ຊະນະມານັ້ນແລແມ່ນສັນໃດ ພິກຂຸນີ້ກໍອຸປະມາສັນນັ້ນ ບຸກຄົນບາງຄົນໃນໂລກນີ້ເປັນເຊັ່ນນີ້

ບຸກຄົນປຽບເໝືອນນັກຮົບອາຊີບ ໕ ຈຳພວກນີ້ມີຜາກົດຢູ່ໃນພິກຂຸທັງຫຼາຍ

[໑໘໗] ໃນບົດມາຕິການັ້ນ ພິກຂຸຜູ້ຖືບິນທະບາດເປັນວັດ ໕ ຈຳພວກ ເປັນແນວໃດ?

ພິກຂຸເປັນຜູ້ຖືບິນທະບາດເປັນວັດ ຍ້ອນຄວາມບໍ່ເຂົ້າໃຈ ຄວາມບໍ່ຮູ້ ມີຄວາມປາຖະໜາຊົ່ວຊາມ ຖືກຄວາມຢາກຄອບງຳ ເປັນຜູ້ຖືບິນທະບາດເປັນວັດ ຍ້ອນວິກົນຈະລິດມີຈິດຟຸ້ງຊ່ານ ເປັນຜູ້ຖືບິນທະບາດເປັນວັດຍ້ອນຄິດວ່າ "ການຖືບິນທະບາດເປັນວັດນີ້ ພຣະພຸດທະເຈົ້າ ສາວົກຂອງພຣະພຸດທະເຈົ້າກ່າວສັນເສີນ"

ອີກປະການໜຶ່ງ ເປັນຜູ້ຖືບິນທະບາດເປັນວັດ ຍ້ອນອາໄສຄວາມເປັນຜູ້ມັກໜ້ອຍຢ່າງດຽວ ຍ້ອນອາໄສຄວາມສັນໂດດຢ່າງດຽວ ຍ້ອນອາໄສຄວາມຂັດເກົາຢ່າງດຽວ ຍ້ອນອາໄສຄວາມຕ້ອງການປະຕິບັດໃນວັດອັນດີງາມນີ້ຢ່າງດຽວ ບັນດາພິກຂຸເຫຼົ່ານັ້ນ ພິກຂຸໃດ ເປັນຜູ້ຖືບິນທະບາດເປັນວັດ ຍ້ອນອາໄສຄວາມມັກໜ້ອຍຢ່າງດຽວ ຍ້ອນອາໄສຄວາມສັນໂດດຢ່າງດຽວ ຍ້ອນອາໄສຄວາມຂັດເກົາຢ່າງດຽວ ຍ້ອນອາໄສຄວາມຕ້ອງການປະຕິບັດໃນວັດອັນດີງາມນີ້ຢ່າງດຽວ ພິກຂຸນີ້ເປັນຜູ້ເລີດ ປະເສີດສຸດ ເປັນປະທານສູງສຸດ ແລະຍິ່ງໃຫຍ່ທີ່ສຸດ

ປຽບເໝືອນນົມສົດເກີດຈາກງົວແມ່ ນົມສົ້ມເກີດຈາກນົມສົດ ເນີຍຂຸ້ນເກີດຈາກນົມສົ້ມ ເນີຍໃສເກີດຈາກເນີຍຂຸ້ນ ຍອດເນີຍໃສເກີດຈາກເນີຍໃສ ຍອດເນີຍໃສຊາວໂລກຖືວ່າ ເປັນເລີດໃນບັນດານົມສົດເປັນຕົ້ນນັ້ນ ສັນໃດ

ບັນດາພິກຂຸຜູ້ຖືບິນທະບາດເປັນວັດ ໕ ຈຳພວກນີ້ ພິກຂຸຜູ້ຖືບິນທະບາດເປັນວັດ ຍ້ອນອາໄສຄວາມມັກໜ້ອຍຢ່າງດຽວ ຍ້ອນອາໄສຄວາມສັນໂດດຢ່າງດຽວ ຍ້ອນອາໄສຄວາມຂັດເກົາຢ່າງດຽວ ຍ້ອນອາໄສຄວາມຕ້ອງການປະຕິບັດໃນວັດອັນດີງາມນີ້ຢ່າງດຽວ ເປັນຜູ້ເລີດ ປະເສີດສຸດ ເປັນປະທານສູງສຸດ ແລະຍິ່ງໃຫຍ່ທີ່ສຸດ ສັນນັ້ນ

ພິກຂຸຜູ້ຖືບິນທະບາດເປັນວັດ ໕ ຈຳພວກເຫຼົ່ານີ້

[໘໐໐] ບັນດາພິກຂຸເຫຼົ່ານັ້ນ ພິກຂຸຜູ້ຖືການຫ້າມພັດອັນເຂົາບຳມາຖວາຍໃນພາຍຫຼັງເປັນວັດ ໕ ຈຳພວກ ຯລຯ

ພິກຂຸຜູ້ຖືການນັ່ງສັນອາສະນະດຽວເປັນວັດ ໕ ຈຳພວກ

ຯລຯ

ພິກຂຸຜູ້ຖືຜ້າບັງສຸກຸນເປັນວັດ ໕ ຈຳພວກ

ຯລຯ

ພິກຂຸຜູ້ຖືໄຕຣຈີວອນເປັນວັດ ໕ ຈຳພວກ

ຯລຯ

ພິກຂຸຜູ້ຖືການຢູ່ປ່າເປັນວັດ ໕ ຈຳພວກ

ຯລຯ

ພິກຂຸຜູ້ຖືການຢູ່ເຫງົ້າໄມ້ເປັນວັດ ໕ ຈຳພວກ

ຯລຯ

ພິກຂຸຜູ້ຖືການຢູ່ກາງແຈ້ງເປັນວັດ ໕ ຈຳພວກ

ຯລຯ

ພິກຂຸຜູ້ຖືການນັ່ງເປັນວັດ ໕ ຈຳພວກ

ຯລຯ

ພິກຂຸຜູ້ຖືການນັ່ງເທິງອາສະນະຕາມທີ່ໄດ້ຈັດໄວ້ເປັນວັດ ໕ ຈຳພວກ ເປັນແນວໃດ?

ຯລຯ

[໘໐໑] ບັນດາພິກຂຸເຫຼົ່ານັ້ນ ພິກຂຸຜູ້ຖືການຢູ່ປ່າຊ້າເປັນວັດ ໕ ຈຳພວກ ເປັນແນວໃດ?

ພິກຂຸຜູ້ຖືການຢູ່ປ່າຊ້າເປັນວັດ ຍ້ອນຄວາມບໍ່ເຂົ້າໃຈ ຄວາມບໍ່ຮູ້ມີຄວາມປາດຖະໜາຊົ່ວຊາມ ຖືກຄວາມຢາກຄອບງຳ ເປັນຜູ້ຖືການຢູ່ປ່າຊ້າເປັນວັດ ຍ້ອນວິກົນຈະລິດ ມີຈິດຟຸ້ງຊ່ານເປັນຜູ້ຖືການຢູ່ປ່າຊ້າເປັນວັດຍ້ອນຄິດວ່າ "ການຢູ່ປ່າຊ້າເປັນວັດນີ້ ພຣະພຸດທະເຈົ້າ ສາວົກຂອງພຣະພຸດທະເຈົ້າກ່າວສັນເສີນ"

ອີກປະການໜຶ່ງ ເປັນຜູ້ຖືການຢູ່ປ່າຊ້າເປັນວັດ ຍ້ອນອາໄສຄວາມມັກໜ້ອຍຢ່າງດຽວ ຍ້ອນອາໄສຄວາມສັນໂດດຢ່າງດຽວ ຍ້ອນອາໄສຄວາມຂັດເກົາຢ່າງດຽວ ຍ້ອນອາໄສຄວາມຕ້ອງການປະຕິບັດໃນວັດອັນດີງາມຢ່າງດຽວ ບັນດາພິກຂຸເຫຼົ່ານັ້ນ ພິກຂຸໃດເປັນຜູ້ຖືການຢູ່ປ່າຊ້າເປັນວັດ ຍ້ອນອາໄສຄວາມມັກໜ້ອຍຢ່າງດຽວ ຍ້ອນອາໄສຄວາມສັນໂດດຢ່າງດຽວ ຍ້ອນອາໄສຄວາມຂັດເກົາຢ່າງດຽວ ຍ້ອນອາໄສຄວາມຕ້ອງການປະຕິບັດໃນວັດອັນດີງາມຢ່າງດຽວ ພິກຂຸນີ້ເປັນຜູ້ເລີດ ປະເສີດສຸດ ເປັນປະທານ ສູງສຸດ ແລະຍິ່ງໃຫຍ່ທີ່ສຸດ

ປຽບເໝືອນນົມສົດເກີດຈາກງົວແມ່ ນົມສົ້ມເກີດຈາກນົມສົດ ເນີຍຂຸ້ນເກີດຈາກນົມສົ້ມ ເນີຍໃສເກີດຈາກເນີຍຂຸ້ນ ຍອດເນີຍໃສເກີດຈາກເນີຍໃສ ຍອດເນີຍໃສຊາວໂລກຖືວ່າ ເປັນເລີດໃນບັນດານົມສົດເປັນຕົ້ນນັ້ນ ສັນໃດ

ບັນດາພິກຂຸຜູ້ຖືການຢູ່ປ່າຊ້າເປັນວັດ ໕ ຈຳພວກນີ້ ພິກຂຸຜູ້ຖືການຢູ່ປ່າຊ້າເປັນວັດ ຍ້ອນອາໄສຄວາມມັກໜ້ອຍຢ່າງດຽວ ຍ້ອນອາໄສຄວາມສັນໂດດຢ່າງດຽວ

ຍ້ອນອາໄສຄວາມຂັດເກົາຢ່າງດຽວ ຍ້ອນອາໄສຄວາມປະຕິບັດໃນວັດອັນດີງາມນີ້ ຢ່າງດຽວ ເປັນຜູ້ເລີດ ປະເສີດສຸດ ເປັນປະທານ ສູງສຸດ ແລະຍິ່ງໃຫຍ່ທີ່ສຸດ ສັນນັ້ນ

ພິກຂຸຜູ້ຖືການຢູ່ປ່າຊ້າເປັນວັດ ໕ ຈຳພວກເຫຼົ່ານີ້

**ປັນຈະກະນິດເທດ ຈົບ**

# ໖. ສັກກະປຸກຄະລະບັນຍັດ

[໔໐໔] ບັນດາບຸຄົກເຫຼົ່ານັ້ນ ບຸກຄົນຜູ້ຕັດສະຣູ້ສັດຈະດ້ວຍຕົນເອງໃນທຳທີ່ບໍ່ເຄີຍສະດັບມາກ່ອນເຖິງຄວາມເປັນສັບພັນຍູໃນທຳນັ້ນ ແລະເຖິງຄວາມຊຳນານໃນທົດສະພົນຍານ ບຸກຄົນນັ້ນເພິ່ງຮູ້ວ່າ ເປັນພຣະສຳມາສຳພຸດທະເຈົ້າຍ້ອນສັບພັນຍຸຕະຍານນັ້ນ

ບຸກຄົນຜູ້ຕັດສະຣູ້ສັດຈະດ້ວຍຕົນເອງໃນທຳທີ່ບໍ່ເຄີຍສະດັບມາກ່ອນ ແຕ່ບໍ່ເຖິງຄວາມເປັນສັບພັນຍູໃນທຳນັ້ນ ແລະບໍ່ເຖິງຄວາມຊຳນານໃນທົດສະພົນຍານ ບຸກຄົນນັ້ນເພິ່ງຮູ້ວ່າ ເປັນພຣະປັດເຈກະພຸດທະເຈົ້າຍ້ອນສັບພັນຍຸຕະຍານນັ້ນ

ບຸກຄົນຜູ້ບໍ່ຕັດສະຣູ້ສັດຈະດ້ວຍຕົນເອງໃນທຳທີ່ບໍ່ເຄີຍສະດັບມາກ່ອນ ເປັນຜູ້ເຮັດບ່ອນສຸດແຫ່ງທຸກໄດ້ໃນປັດຈຸບັນ ແລະບັນລຸສາວົກປາຣະມີຍານ ບຸກຄົນເຫຼົ່ານັ້ນເພິ່ງຮູ້ວ່າ ເປັນພຣະສາຣີບຸດ ແລະເປັນພຣະໂມກຄັນລານະຍ້ອນສາວົກປາຣະມີຍານນັ້ນ

ບຸກຄົນຜູ້ບໍ່ຕັດສະຣູ້ສັດຈະດ້ວຍຕົນເອງໃນທຳທີ່ບໍ່ເຄີຍສະດັບມາກ່ອນ ເປັນຜູ້ເຮັດບ່ອນສຸດແຫ່ງທຸກໄດ້ໃນປັດຈຸບັນ ແຕ່ບໍ່ບັນລຸສາວົກປາຣະມີຍານ ບຸກຄົນເຫຼົ່ານັ້ນເພິ່ງຮູ້ວ່າ ເປັນພຣະອະຣະຫັນທີ່ເຫຼືອຍ້ອນການເຮັດບ່ອນສຸດແຫ່ງທຸກນັ້ນ

ບຸກຄົນຜູ້ບໍ່ຕັດສະຣູ້ສັດຈະດ້ວຍຕົນເອງໃນທຳທີ່ບໍ່ເຄີຍສະດັບມາກ່ອນ ແລະບໍ່ໄດ້ເຮັດບ່ອນສຸດແຫ່ງທຸກໃນປັດຈຸບັນ ເປັນພຣະອະນາຄາມີ ບໍ່ມາສູ່ໂລກນີ້ອີກ ບຸກຄົນນັ້ນເພິ່ງຮູ້ວ່າ ເປັນພຣະອະນາຄາມີ ເຮັດການບໍ່ກັບມາສູ່ໂລກນີ້ອີກ

ບຸກຄົນຜູ້ບໍ່ຕັດສະຮູ້ສັດຈະດ້ວຍຕົນເອງໃນທຳທີ່ບໍ່ເຄີຍສະດັບມາກ່ອນ ແລະບໍ່ໄດ້ເຮັດບ່ອນສຸດແຫ່ງທຸກໃນປັດຈຸບັນ ຍັງມາສູ່ໂລກນີ້ອີກ ບຸກຄົນນັ້ນ ເພິ່ງຮູ້ວ່າ ເປັນພຣະໂສດາບັນ ແລະພຣະສະກະທາຄາມີ ຍ້ອນການມາສູ່ໂລກນີ້ອີກ

**ສັກກະນິດເທດ ຈົບ**

## ໗. ສັດຕະກະປຸກຄະລະບັນຍັດ

[໔໐໘] ບຸກຄົນຜູ້ຈົມແລ້ວເທື່ອດຽວກໍຍັງຈົມຢູ່ນັ້ນເອງ ເປັນແນວໃດ?

ບຸກຄົນບາງຄົນໃນໂລກນີ້ເປັນຜູ້ປະກອບດ້ວຍສະພາວະທຳທີ່ເປັນອະກຸສົນຝ່າຍດຳໂດຍສ່ວນດຽວ ບຸກຄົນເຊັ່ນນີ້ຊື່ວ່າຈົມແລ້ວເທື່ອດຽວກໍຍັງຈົມຢູ່ນັ້ນເອງ

ບຸກຄົນຜູ້ຜຸດຂຶ້ນແລ້ວຈົມລົງອີກ ເປັນແນວໃດ?

ບຸກຄົນບາງຄົນໃນໂລກນີ້ຜຸດຂຶ້ນ ໄດ້ແກ່ ເຂົາມີສັດທາດີໃນກຸສົນທຳທັງຫຼາຍ ມີຫິຣິດີ ຯລຯ ມີໂອດຕັບປະດີ ຯລຯ ມີວິຣິຍະດີ ຯລຯ ມີປັນຍາດີໃນກຸສົນທຳທັງຫຼາຍ ແຕ່ສັດທາຂອງເຂົານັ້ນ ຍ່ອມບໍ່ຄົງຢູ່ກັບທີ່ ບໍ່ຈະເລີນ ມີແຕ່ເສື່ອມຢ່າງດຽວ ຫິຣິຂອງເຂົານັ້ນ ຯລຯ ໂອດຕັບປະຂອງເຂົານັ້ນ ຯລຯ ວິຣິຍະຂອງເຂົານັ້ນ ຯລຯ ປັນຍາຂອງເຂົານັ້ນຍ່ອມບໍ່ຄົງຢູ່ກັບທີ່ບໍ່ຈະເລີນ ມີແຕ່ເສື່ອມຢ່າງດຽວ ບຸກຄົນເຊັ່ນນີ້ຊື່ວ່າ ຜຸດຂຶ້ນແລ້ວຈົມລົງອີກ

ບຸກຄົນຜູ້ຜຸດຂຶ້ນແລ້ວຢຸດຢູ່ ເປັນແນວໃດ?

ບຸກຄົນບາງຄົນໃນໂລກນີ້ຜຸດຂຶ້ນ ໄດ້ແກ່ ເຂົາມີສັດທາດີໃນກຸສົນທຳທັງຫຼາຍ ມີຫິຣິດີ ຯລຯ ມີໂອດຕັບປະດີ ຯລຯ ມີວິຣິຍະດີ ຯລຯ ມີປັນຍາດີໃນກຸສົນທຳທັງຫຼາຍ ແລະສັດທາຂອງເຂົານັ້ນບໍ່ເສື່ອມ ບໍ່ຈະເລີນ ຄົງຢູ່ກັບທີ່ ຫິຣິຂອງເຂົານັ້ນ ຯລຯ ໂອດຕັບປະຂອງເຂົານັ້ນ ຯລຯ ວິຣິຍະຂອງເຂົານັ້ນ ຯລຯ ປັນຍາຂອງເຂົານັ້ນບໍ່ເສື່ອມ ບໍ່ຈະເລີນ ຄົງຢູ່ກັບທີ່ ບຸກຄົນເຊັ່ນນີ້ຊື່ວ່າ ຜຸດຂຶ້ນແລ້ວຢຸດຢູ່

ບຸກຄົນຜູ້ຜຸດຂຶ້ນແລ້ວຫຼຽວແນມເບິ່ງ ເປັນແນວໃດ?

ບຸກຄົນບາງຄົນໃນໂລກນີ້ຜຸດຂຶ້ນ ໄດ້ແກ່ ເຂົາມີສັດທາດີໃນກຸສົນທຳທັງຫຼາຍ ມີຫິຣິດີ ຯລຯ ມີໂອດຕັບປະດີ ຯລຯ ມີວິຣິຍະດີ ຯລຯ ມີປັນຍາດີໃນກຸສົນທຳທັງຫຼາຍ ບຸກຄົນນັ້ນຍ້ອນສັງໂຍດ ໓ ປະການສິ້ນໄປ ເປັນໂສດາບັນ ບໍ່ມີທາງຕົກຕ່ຳ ມີຄວາມແນ່ນອນທີ່ຈະສຳເລັດສຳໂພທິໃນວັນຂ້າງໜ້າ ບຸກຄົນເຊັ່ນນີ້ຊື່ວ່າ ຜຸດຂຶ້ນແລ້ວຫຼຽວແນມເບິ່ງ

ບຸກຄົນຜູ້ຜຸດຂຶ້ນແລ້ວຂ້າມໄປ ເປັນແນວໃດ?

ບຸກຄົນບາງຄົນໃນໂລກນີ້ຟຸດຂຶ້ນ ໄດ້ແກ່ ເຂົາມີສັດທາດີໃນກຸສົນທຳທັງຫຼາຍ ມີຫິຣິດີ ຯລຯ ມີໂອດຕັບປະດີ ຯລຯ ມີວິຣິຍະດີ ຯລຯ ມີປັນຍາດີໃນກຸສົນທຳທັງຫຼາຍ ບຸກຄົນນັ້ນຍ້ອນສັງໂຍດ ໓ ປະການສິ້ນໄປ ແລະຍ້ອນເຮັດຣາຄະ ໂທສະ ໂມຫະເບົາບາງ ເປັນສະກະທາຄາມີ ກັບມາສູ່ໂລກນີ້ອີກພຽງເທື່ອດຽວເທົ່ານັ້ນກໍຈະເຮັດບ່ອນສຸດແຫ່ງທຸກໄດ້ ບຸກຄົນເຊັ່ນນີ້ຊື່ວ່າຟຸດຂຶ້ນແລ້ວຂ້າມໄປ

ບຸກຄົນຜູ້ຟຸດຂຶ້ນແລ້ວໄດ້ທີ່ເພິ່ງ ເປັນແນວໃດ?

ບຸກຄົນບາງຄົນໃນໂລກນີ້ຟຸດຂຶ້ນ ໄດ້ແກ່ ເຂົາມີສັດທາດີໃນກຸສົນທຳທັງຫຼາຍ ມີຫິຣິດີ ຯລຯ ມີໂອດຕັບປະດີ ຯລຯ ມີວິຣິຍະດີ ຯລຯ ມີປັນຍາດີໃນກຸສົນທຳທັງຫຼາຍ ແລະຍ້ອນສັງໂຍດເບື້ອງຕ່ຳ ໕ ປະການສິ້ນໄປ ເປັນໂອປະປາຕິກະ ຈະປະຣິນິບພານໃນເທວະໂລກນັ້ນ ບໍ່ກັບມາຈາກພົບນັ້ນເປັນທຳມະດາ ບຸກຄົນເຊັ່ນນີ້ຊື່ວ່າຟຸດຂຶ້ນແລ້ວໄດ້ບ່ອນເພິ່ງ

ບຸກຄົນຜູ້ຟຸດຂຶ້ນແລ້ວຂ້າມໄປຮອດຝັ່ງເປັນຜູ້ລອຍບາບຢູ່ເທິງບົກ ເປັນແນວໃດ?

ບຸກຄົນບາງຄົນໃນໂລກນີ້ຟຸດຂຶ້ນ ໄດ້ແກ່ ເຂົາມີສັດທາດີໃນກຸສົນທຳທັງຫຼາຍ ມີຫິຣິດີ ຯລຯ ມີໂອດຕັບປະດີ ຯລຯ ມີວິຣິຍະດີ ຯລຯ ມີປັນຍາດີໃນກຸສົນທຳທັງຫຼາຍ ແລະເຂົາເຮັດໃຫ້ແຈ້ງເຈໂຕວິມຸດຕິ ປັນຍາວິມຸດຕິອັນບໍ່ມີອາສະວະ ຍ້ອນອາສະວະທັງຫຼາຍສິ້ນໄປດ້ວຍປັນຍາອັນຍິ່ງເອງເຂົ້າເຖິງຢູ່ໃນປັດຈຸບັນ ບຸກຄົນເຊັ່ນນີ້ຊື່ວ່າຟຸດຂຶ້ນແລ້ວຂ້າມໄປຮອດຝັ່ງເປັນຜູ້ລອຍບາບໄດ້ຢູ່ເທິງບົກ

[໘໐໔] ບຸກຄົນຜູ້ເປັນອຸພະໂຕພາຄະວິມຸດຕະ ເປັນແນວໃດ?

ບຸກຄົນບາງຄົນໃນໂລກນີ້ສຳຜັດວິໂມກ ໘ ດ້ວຍກາຍຢູ່ ແລະອາສະວະຂອງເຂົາຍ່ອມສິ້ນໄປ ຍ້ອນເຫັນດ້ວຍປັນຍາ ບຸກຄົນນີ້ຮຽກວ່າ ຜູ້ເປັນອຸພະໂຕພາຄະວິມຸດຕະ

[໘໐໕] ບຸກຄົນຜູ້ເປັນປັນຍາວິມຸດຕະ

ຯລຯ

ບຸກຄົນຜູ້ເປັນກາຍະສັກຂີ

ຯລຯ

ບຸກຄົນຜູ້ເປັນທິດຖິປັດຕະ

ຯລຯ

ບຸກຄົນຜູ້ເປັນສັດທາວິມຸດຕະ

ຯລຯ

ບຸກຄົນຜູ້ເປັນທຳມານຸສາຣີ ເປັນແນວໃດ?

ຯລຯ

[໔໐໖] ບຸກຄົນຜູ້ເປັນສັດທານຸສາຣີ ເປັນແນວໃດ?

ບຸກຄົນຜູ້ປະຕິບັດເພື່ອເຮັດໃຫ້ແຈ້ງໂສດາປັດຕິຜົນ ມີສັດທິນຊີອັນມີປະມານຍິ່ງ ຈະເລີນອະຣິຍະມັກອັນມີສັດທາເປັນຕົວນຳ ມີສັດທາເປັນປະທານ ບຸກຄົນນີ້ຮຽກວ່າ ສັດທານຸສາຣີ ບຸກຄົນຜູ້ປະຕິບັດເພື່ອເຮັດໃຫ້ແຈ້ງໂສດາປັດຕິຜົນຊື່ວ່າສັດທານຸສາຣີ ບຸກຄົນຜູ້ດຳຣົງຢູ່ໃນຜົນ ຊື່ວ່າສັດທາວິມຸດຕະ

**ສັດຕະກະນິດເທດ ຈົບ**

## ໗. ອັດຖະກະປຸກຄະລະບັນຍັດ

[໔໐໗] ບຸກຄົນຜູ້ພ້ອມພຽງດ້ວຍມັກ ໔ ຈຳພວກ ບຸກຄົນຜູ້ພ້ອມພຽງດ້ວຍຜົນ ໔ ຈຳພວກ ເປັນແນວໃດ?

໑. ບຸກຄົນຜູ້ເປັນພຣະໂສດາບັນ ບຸກຄົນຜູ້ປະຕິບັດເພື່ອເຮັດໃຫ້ແຈ້ງໂສດາປັດຕິຜົນ
໒. ບຸກຄົນຜູ້ເປັນພຣະສະກະທາຄາມີ ບຸກຄົນຜູ້ປະຕິບັດເພື່ອເຮັດໃຫ້ແຈ້ງສະກະທາຄາມີຜົນ
໓. ບຸກຄົນຜູ້ເປັນພຣະອະນາຄາມີ ບຸກຄົນຜູ້ປະຕິບັດເພື່ອເຮັດໃຫ້ແຈ້ງອະນາຄາມີຜົນ
໔. ບຸກຄົນຜູ້ເປັນພຣະອະຣະຫັນ ບຸກຄົນຜູ້ປະຕິບັດເພື່ອເຮັດໃຫ້ແຈ້ງອະຣະຫັດຕະຜົນ
໕. ບຸກຄົນຜູ້ພ້ອມພຽງດ້ວຍມັກ ໔ ຈຳພວກ ຜູ້ພ້ອມພຽງດ້ວຍຜົນ ໔ ຈຳພວກເຫຼົ່ານີ້

**ອັດຖະກະນິດເທດ ຈົບ**

## ໘. ນະວະກະປຸກຄະລະບັນຍັດ

[໔໐໘] ບຸກຄົນຜູ້ເປັນສຳມາສຳພຸດທະ ເປັນແນວໃດ?

ບຸກຄົນບາງຄົນໃນໂລກນີ້ຕັດສະຣູ້ສັດຈະ ໔ ດ້ວຍຕົນເອງໃນທຳທີ່ບໍ່ເຄີຍສະດັບມາກ່ອນ ບັນລຸຄວາມເປັນສັບພັນຍູໃນທຳຄືສັດຈະ ໔ ນັ້ນ ແລະເຖິງຄວາມຊຳນານໃນທົດສະພົນຍານ ບຸກຄົນນີ້ຮຽກວ່າ ຜູ້ເປັນສຳມາສຳພຸດທະ

ບຸກຄົນຜູ້ເປັນປັດເຈກະພຸດທະ ເປັນແນວໃດ?

ບຸກຄົນບາງຄົນໃນໂລກນີ້ຕັດສະຣູ້ສັດຈະ ໔ ດ້ວຍຕົນເອງໃນທຳທີ່ບໍ່ເຄີຍສະດັບມາກ່ອນ ແຕ່ບໍ່ບັນລຸຄວາມເປັນສັບພັນຍູໃນທຳຄືສັດຈະ ໔ ນັ້ນ ແລະບໍ່ເຖິງຄວາມຊຳນານໃນ ທົດສະພົນຍານ ບຸກຄົນນີ້ຮຽກວ່າ ຜູ້ເປັນປັດເຈກະພຸດທະ

ບຸກຄົນຜູ້ເປັນອຸພະໂຕພາຄະວິມຸດຕະ ເປັນແນວໃດ?

ບຸກຄົນບາງຄົນໃນໂລກນີ້ສຳຜັດວິໂມກ ໘ ດ້ວຍກາຍຢູ່ ແລະອາສະວະທັງຫຼາຍຂອງເຂົາຍ່ອມສິ້ນໄປຍ້ອນເຫັນດ້ວຍປັນຍາ ບຸກຄົນນີ້ຮຽກວ່າ ຜູ້ເປັນອຸພະໂຕພາຄະວິມຸດຕະ

ບຸກຄົນຜູ້ເປັນປັນຍາວິມຸດຕະ ເປັນແນວໃດ?

ບຸກຄົນບາງຄົນໃນໂລກນີ້ບໍ່ໄດ້ສຳຜັດວິໂມກ ໘ ດ້ວຍກາຍຢູ່ ແຕ່ອາສະວະທັງຫຼາຍຂອງເຂົາຍ່ອມສິ້ນໄປຍ້ອນເຫັນດ້ວຍປັນຍາ ບຸກຄົນນີ້ຮຽກວ່າ ຜູ້ເປັນປັນຍາວິມຸດຕະ

ບຸກຄົນຜູ້ເປັນກາຍະສັກຂີ ເປັນແນວໃດ?

ບຸກຄົນບາງຄົນໃນໂລກນີ້ສຳຜັດວິໂມກ ໘ ດ້ວຍກາຍຢູ່ ແລະອາສະວະທັງຫຼາຍຂອງເຂົາຍ່ອມສິ້ນໄປຍ້ອນເຫັນດ້ວຍປັນຍາ ບຸກຄົນນີ້ຮຽກວ່າ ຜູ້ເປັນກາຍະສັກຂີ

ບຸກຄົນຜູ້ເປັນທິດຖິປັດຕະ ເປັນແນວໃດ?

ບຸກຄົນບາງຄົນໃນໂລກນີ້ຍ່ອມຮູ້ຊັດແຈ້ງຕາມຄວາມເປັນຈິງວ່າ "ນີ້ທຸກ ຯລຯ ນີ້ຂໍ້ປະຕິບັດໃຫ້ເຖິງຄວາມດັບທຸກ" ອັນໜຶ່ງ ສະພາວະທຳທີ່ພຣະຕະຖາຄົດເຈົ້າປະກາດແລ້ວ ບຸກຄົນນັ້ນເຫັນຊັດແຈ້ງແລ້ວດ້ວຍປັນຍາ ປະພຶດດີແລ້ວດ້ວຍປັນຍາ ແລະອາສະວະບາງຢ່າງຂອງເຂົາຍ່ອມສິ້ນໄປຍ້ອນເຫັນດ້ວຍປັນຍາ ບຸກຄົນນີ້ຮຽກວ່າ ຜູ້ເປັນທິດຖິປັດຕະ

ບຸກຄົນຜູ້ເປັນສັດທາວິມຸດຕະ ເປັນແນວໃດ?

ບຸກຄົນບາງຄົນໃນໂລກນີ້ຮູ້ຊັດແຈ້ງຕາມຄວາມເປັນຈິງວ່າ "ນີ້ທຸກ ຯລຯ ນີ້ຂໍ້ປະຕິບັດໃຫ້ເຖິງຄວາມດັບທຸກ" ອັນໜຶ່ງ ສະພາວະທຳທີ່ພຣະຕະຖາຄົດເຈົ້າປະກາດແລ້ວ ບຸກຄົນນັ້ນເຫັນຊັດແຈ້ງແລ້ວດ້ວຍປັນຍາ ປະພຶດດີແລ້ວດ້ວຍປັນຍາ ແລະອາສະວະບາງຢ່າງຂອງເຂົາຍ່ອມສິ້ນໄປຍ້ອນເຫັນດ້ວຍປັນຍາ ແຕ່ບໍ່ເໝືອນຜູ້ເປັນທິດຖິປັດຕະ ບຸກຄົນນີ້ຮຽກວ່າ ຜູ້ເປັນສັດທາວິມຸດຕະ

ບຸກຄົນຜູ້ເປັນທຳມານຸສາຣີ ເປັນແນວໃດ?

ປັນຍິນຊີຂອງບຸກຄົນໃດຜູ້ປະຕິບັດເພື່ອເຮັດໃຫ້ແຈ້ງໂສດາປັດຕິຜົນ ມີປະມານຍິ່ງ ບຸກຄົນນັ້ນຍ່ອມຈະເລີນອະຣິຍະມັກອັນມີປັນຍາເປັນຕົວນຳ ມີປັນຍາເປັນປະທານ ບຸກຄົນນີ້ຮຽກວ່າ ຜູ້ເປັນທຳມານຸສາຣີ ບຸກຄົນຜູ້ປະຕິບັດເພື່ອເຮັດໃຫ້ແຈ້ງໂສດາປັດຕິຜົນຊື່ວ່າຜູ້ເປັນທຳມານຸສາຣີ ບຸກຄົນຜູ້ຕັ້ງຢູ່ໃນຜົນຊື່ວ່າຜູ້ເປັນທິດຖິປັດຕະ

ບຸກຄົນຜູ້ເປັນສັດທານຸສາຣີ ເປັນແນວໃດ?

ສັດທິນຊີຂອງບຸກຄົນຜູ້ປະຕິບັດເພື່ອເຮັດໃຫ້ແຈ້ງໂສດາປັດຕິຜົນ ມີປະມານຍິ່ງ ບຸກຄົນນັ້ນຍ່ອມຈະເລີນອະຣິຍະມັກອັນມີສັດທາເປັນຕົວນຳ ມີສັດທາເປັນປະທານ ບຸກຄົນນີ້ຮຽກວ່າ ຜູ້ເປັນສັດທານຸສາຣີ ບຸກຄົນຜູ້ປະຕິບັດເພື່ອເຮັດໃຫ້ແຈ້ງໂສດາປັດຕິຜົນຊື່ວ່າ ຜູ້ເປັນສັດທານຸສາຣີ ບຸກຄົນຜູ້ຕັ້ງຢູ່ໃນຜົນຊື່ວ່າ ຜູ້ເປັນສັດທາວິມຸດຕະ

**ນະວະກະນິດເທດ ຈົບ**

# ໑໐. ທະສະກະປຸກຄະລະບັນຍັດ

[໔໐໗] ບຸກຄົນຜູ້ມີຄວາມສຳເລັດໃນການມາວະຈອນພູມນີ້ ໕ ຈຳພວກ ເປັນແນວໃດ?

ບຸກຄົນ ໕ ຈຳພວກເຫຼົ່ານີ້ ຄື

໑. ບຸກຄົນຜູ້ເປັນ ສັດຕັກຂັດຕຸປະຣະມະ
໒. ບຸກຄົນຜູ້ເປັນ ໂກລັງໂກລະ
໓. ບຸກຄົນຜູ້ເປັນ ເອກະພິຊີ
໔. ບຸກຄົນຜູ້ເປັນ ສະກະທາຄາມີ
໕. ບຸກຄົນຜູ້ສຳເລັດເປັນພຣະອະຣະຫັນໃນອັດຕະພາບນີ້

ບຸກຄົນຜູ້ມີຄວາມສຳເລັດໃນການມາວະຈອນພູມນີ້ ໕ ຈຳພວກເຫຼົ່ານີ້
ບຸກຄົນຜູ້ລະອັດຕະພາບໃນການມາວະຈອນພູມແລ້ວສຳເລັດ ໕ ຈຳພວກ ເປັນແນວໃດ?
ບຸກຄົນ ໕ ຈຳພວກເຫຼົ່ານີ້ ຄື

໑. ບຸກຄົນຜູ້ເປັນ ອັນຕະຣາປະຣິນິບພາຍີ
໒. ບຸກຄົນຜູ້ເປັນ ອຸປະຫັດຈະປະຣິນິບພາຍີ
໓. ບຸກຄົນຜູ້ເປັນ ອະສັງຂາຣະປະຣິນິບພາຍີ
໔. ບຸກຄົນຜູ້ເປັນ ສະສັງຂາຣະປະຣິນິບພາຍີ
໕. ບຸກຄົນຜູ້ເປັນ ອຸດທັງໂສໂຕອະກະນິດຖະຄາມີ

ບຸກຄົນຜູ້ລະອັດຕະພາບໃນການມາວະຈອນພູມນີ້ແລ້ວສຳເລັດ ໕ ຈຳພວກເຫຼົ່ານີ້ແລ
ການບັນຍັດບຸກຄົນຍ່ອມມີດ້ວຍບັນຍັດພຽງເທົ່ານີ້

**ທະສະກະນິດເທດ ຈົບ**

**ປະກອນທີ່ຊື່ວ່າ ປຸກຄະລະບັນຍັດ ສະພານະວານ ຈົບ**